# ໂຄສະນາ




ວາລະສານຂອງຄະນະໂຄສະນາອົບຮົມສູນກາງພັກ

ສຳລັບປາກະກະກາ ແລະ ໂຄສະນາດ້ວຍປາກ

ສາທາລະນະລັດ ປະຊາທິປະໄຕ ປະຊາຊົນລາວ

ສັນຕິພາບ ເອກະລາດ ເອກະພາບ ສັງຄົມນິຍົມ

--------+++--------

<u>ພັກປະຊາຊົນປະຕິວັດລາວ</u>

<u>ກົມການເມືອງສູນກາງພັກ</u> <u>ເລກທີ 13</u>/ກມສພ.

ມະຕິຕົກລົງ

ຂອງກົມການເມືອງສູນກາງພັກ

ວ່າດ້ວຍການຈັດຕັ້ງສະເຫລີມສະຫລອງບັນດາ

ວັນບຸນໃຫຍ່ ໃນປີ 1990.

-----------

ປີ 1990 ເປັນປີທີ່ທົ່ວພັກ, ທົ່ວກອງທັບ ແລະ ທົ່ວປວງຊົນເຮົາຈະໄດ້ຈັດຕັ້ງສະເຫລີມສະຫລອງວັນສ້າງຕັ້ງ ພັກຄົບຮອບ 35 ປີ ແລະ ວັນສະຖາປະນາ ສາທາລະນະລັດປະຊາທິປະໄຕປະຊາຊົນລາວຄົບຮອບ 15 ປີ. ພ້ອມກັນນັ້ນ, ພັກເຮົາ ແລະ ປະຊາຊົນເຮົາຍັງຈະໄດ້ພ້ອມກັບບັນດາພັກ ແລະ ປະເທດອ້າຍນ້ອງ, ຊົນຊັ້ນກຳມາຊີບ ແລະ ປະຊາຊົນ ຊາວ

ໂລກຈັດຕັ້ງລະນຶກວັນເກີດຄົບຮອບ 120 ປີ ຂອງເລນິນ, ຜູ້ນຳທີ່ຍິ່ງໃຫຍ່ຂອງຊົນຊັ້ນກຳມາຊີບ ແລະ ວັນເກີດຄົບຮອບ 100 ປີ ຂອງປະທານ ໂຮ່ຈີມິນ, ນັກລົບຜູ້ລ້ຳເລີດຂອງ ຂະບວນການກອມມູນິດ, ກຳມະກອນສາກົນ ແລະ ຂະບວນການຕໍ່ສູ້ປົດປ່ອຍຊາດຢູ່ໃນໂລກ, ຜູ້ຈັດຕັ້ງ ແລະ ນຳພາພັກກອມມູນິດອິນດູຈີນ ເຊິ່ງແມ່ນຕົ້ນກຳເນີດຂອງພັກປະຊາຊົນ ປະຕິວັດລາວ, ( ສະເພາະວັນເກີດຂອງປະທານ ໂຫຈິມິນ, ອົງການຢູແນັດສະໂກ ໄດ້ຕົກລົງຈັດຕັ້ງສະຫລອງໃນຂອບເຂດ ທົ່ວໂລກ ).

ດັ່ງນັ້ນ ກົມການເມືອງສູນກາງພັກຕົກລົງຈັດຕັ້ງ ສະເຫລີມສະຫລອງ ແລະ ລະນຶກບັນດາວັນດັ່ງກ່າວໂດຍມີ ເນື້ອໃນດັ່ງລຸ່ມນີ້:

## I- <u>ຈຸດປະສົງ</u> <u>ແລະ ຄວາມໝາຍສຳຄັນ:</u>

1/- ແນໃສ່ເຮັດໃຫ້ພະນັກງານ, ສະມາຊິກພັກ ແລະ ປະຊາຊົນເຮົາເຫັນແຈ້ງປະຫວັດສາດ, ມູນເຊື້ອ ແລະການນຳພາອັນປີຊາສາມາດຂອງພັກເຮົາ ໂດຍຜ່ານການຕໍ່ສູ້ ປະຕິວັດໃນໄລຍະທີ່ຜ່ານມາ, ເຫັນແຈ້ງຜົນງານທີ່ການປະຕິວັດ ນຳມາໃຫ້ປະຊາຊົນ ແລະ ປະເທດຊາດເຮົາ, ເຫັນໄດ້ຄວາມແຕກຕ່າງກັນລະຫວ່າງລະບອບເກົ່າກັບລະບອບໃໝ່, ຕີລາຄາຜົນງານທີ່ຍາດມາໄດ້ໃນ 15 ປີທີ່ຜ່ານມາຢ່າງຖືກຕ້ອງ, ພ້ອມກັນນັ້ນກໍເຮັດໃຫ້ປະຊາຊົນເຮົາເຫັນໄດ້ຂໍ້ຫຍຸ້ງຍາກ ແລະ ປະ

ກີດການຫຍໍ້ທໍ້ຕ່າງໆ ທີ່ພວກເຮົາຈະຕ້ອງຜ່ານຜ່າ ແລະ ເດັດດ່ຽວແກ້ໄຂ.

2/- ເຮັດໃຫ້ທຸກຄົນເຊື່ອມຊຶມ ແລະ ເຫັນໄດ້ ແນວທາງນະໂຍບາຍຕໍ່ພາຍໃນ ແລະ ຕ່າງປະເທດຂອງພັກ ແລະ ລັດຖຸເຮົາໃນໄລຍະໃໝ່ຂອງການປະຕິວັດ, ນັ້ນຄືໃນໄລຍະແຫ່ງການປົກປ້ອງ, ຂະຫຍາຍ ແລະ ບູລະນະລະບອບປະຊາທິປະໄຕປະຊາຊົນ, ຂ້າມຜ່ານຂຶ້ນສູ່ສັງຄົມນິຍົມເທື່ອລະກ້າວ; ລັດທິມາກເລນິນແມ່ນເຂັມທິດຊີ້ທາງໃຫ້ແກ່ການປະຕິວັດລາວ; ພັກປະຊາຊົນປະຕິວັດລາວເປັນຜູ້ຈັດຕັ້ງນຳພາທຸກໄຊຊະນະ ຂອງການປະຕິວັດລາວ; ເພີ່ມທະວີຄວາມສາມັກຄີຮ່ວມສຳພັນສູ້ລົບແບບພິເສດລະຫວ່າງ ລາວ - ຫວຽດນາມ - ກຳປູເຈຍ, ເພີ່ມທະວີຄວາມສາມັກຄີຮ່ວມມືຢ່າງຮອບດ້ານກັບສະຫະພາບໂຊວຽດ ແລະ ບັນດາປະເທດສັງຄົມນິຍົມອ້າຍນ້ອງ ພ້ອມກັນນັ້ນເອົາໃຈໃສ່ປົກປ້ອງກໍ່ສ້າງກຳລັງປະຕິວັດໃຫ້ເຂັ້ມແຂງໃນທຸກດ້ານ, ເປັນຕົ້ນແມ່ນກຳລັງປ້ອງກັນຊາດ - ປ້ອງກັນ ຄວາມສະຫງົບປະຊາຊົນໃຫ້ເຂັ້ມແຂງທຸກດ້ານ ເພື່ອປົກປັກຮັກສາ ແລະ ກໍ່ສ້າງປະເທດຊາດ.

3/- ເພື່ອສະແດງເຖິງຄວາມຮູ້ບຸນຄຸນອັນສູງສົ່ງ ຂອງພັກ - ລັດ ແລະ ປະຊາຊົນເຮົາຕໍ່ຄຸນງາມຄວາມດີອັນ ຍິ່ງໃຫຍ່ຂອງ ວ.ອີ. ເລນິນ, ຂອງປະທານໂຮ່ຈີມິນ, ຂອງພັກ-

ລັດ ແລະ ປະຊາຊົນໂຊວຽດ, ຂອງພັກ-ລັດ ແລະ ປະຊາຊົນຫວຽດນາມ ທີ່ມີຕໍ່ການປະຕິວັດລາວ. ເຮັດໃຫ້ທຸກຄົນເຫັນແຈ້ງການອຸທິດອັນຍິ່ງໃຫຍ່ຂອງພວກເພິ່ນຕໍ່ຂະບວນການ ຕໍ່ສູ້ເພື່ອສັນຕິພາບ, ເອກະລາດ, ອຳນາດອະທິປະໄຕ ແລະ ຄວາມກ້າວໜ້າທາງສັງຄົມ, ເຮັດໃຫ້ພະນັກງານ ແລະ ປະຊາຊົນເຮົາເຂົ້າໃຈຢ່າງເລິກເຊິ່ງຕື່ມອີກ ກ່ຽວກັບຊີວິດ ແລະ ພາລະກິດການເຄື່ອນໄຫວອັນຍິ່ງໃຫຍ່ຂອງພວກເພິ່ນ. ຈາກນັ້ນ ເຮັດໃຫ້ພະນັກງານ ແລະ ປະຊາຊົນເຮົາຮ່ຳຮຽນເອົາ ແບບຢ່າງອັນດີເລີດໃນການຕໍ່ສູ້ປະຕິວັດ ແລະ ຄຸນສົມບັດອັນ ຂາວສະອາດຂອງພວກເພິ່ນ.

4/- ເອົາການຈັດຕັ້ງສະເຫຼີມສະຫຼອງ ແລະ ລະນຶກບັນດາວັນດັ່ງກ່າວເປັນການປຸກລະດົມທົ່ວພັກ, ທົ່ວກອງທັບ ແລະ ທົ່ວປວງຊົນເຮົາໃຫ້ມີການຫັນປ່ຽນຢ່າງຮອບດ້ານ ເບີກບານມ່ວນຊື່ນແຂ່ງຂັນກັນປະຕິບັດມະຕິ 5 - 6 -7 ( , ສະໄໝທີ່ 4 ) ຂອງສູນກາງພັກ ແລະ ມະຕິຕົກລົງຕ່າງໆ ຂອງສະພາລັດຖະມົນຕີໃຫ້ປະກົດຜົນເປັນຈິງ, ແນ່ໃສ່ສຳເລັດຈຸດໝາຍທີ່ກອງປະຊຸມໃຫຍ່ຄັ້ງທີ່ 4 ຂອງພັກໄດ້ວາງ ອອກເປັນຕົ້ນແມ່ນຍູ້ຂະບວນການຫັນລົງຮາກຖານ, ລົງສູ່ຊົນນະບົດຂັ້ນເຂດພູດອຍ ເພື່ອປະຕິບັດໂຄງການກະສິກຳ - ປ່າໄມ້ ເຮັດໃຫ້ລະດູການປີ້ນໄດ້ຮັບຜົນສຳເລັດເປັນຢ່າງດີ, ເພື່ອຍາດເອົາໄຊຊະນະອັນຍິ່ງໃຫຍ່ໃນປີ 1990 ຊຶ່ງເປັນປີມ້ວນ ທ້າຍ

ຂອງແຜນການ 5 ປີ ແຫ່ງລັດຄັ້ງທີ II.

## II- ທິດທາງ ແລະ ວິທີຈັດຕັ້ງປະຕິບັດ.

### 1/- ການກະກຽມ:

- ແຕ່ລະຂະແໜງການ ແລະ ທ້ອງຖິ່ນຕ້ອງອີງໃສ່ມະຕິ ເພື່ອສ້າງແຜນການເຄື່ອນໄຫວລະອຽດໃຫ້ແກ່ ຂະແໜງການ ແລະ ທ້ອງຖິ່ນຂອງຕົນ, ເປັນຕົ້ນແມ່ນແຜນການຍູ້ ຂະບວນການຫັນລົງຮາກຖານ,ລົງສູ່ຊົນນະບົດ, ຂຶ້ນໄປເຂດ ພູດອຍ ເພື່ອປະຕິບັດມະຕິ 5 - 6 - 7 ( ສະໄໝທີ 4) ຂອງສູນກາງພັກ ແລະ ມະຕິກົລງຕ່າງໆ ຂອງສະພາລັດຖະມົນຕີໃຫ້ປະກົດຜົນເປັນຈິງ.

- ກະກຽມເອກະສານໂຄສະນາອົບຮົມໃຫ້ພະນັກງານ, ສະມາຊິກພັກ,ປະຊາຊົນບັນດາເຜົ່າໃຫ້ເຊື່ອມຊຶມຄວາມໝາຍສຳຄັນ ແລະ ເນື້ອໃນຂອງບັນດາວັນບຸນໃຫຍ່ໃນປີ 1990 ແລະ ໃຫ້ສະແດງອອກເປັນການກະທຳຕົວຈິງ.

- ກະກຽມງົບປະມານ,ເງິນ ໄຂທາງດ້ານວັດຖຸ ທີ່ຈຳເປັນ.

### 2/- ວຽກງານໂຄສະນາປຸກລະດົມ:

- ຄະນະໂຄສະນາອົບຮົມສູນກາງ ອີງໃສ່ມະຕິ ເພື່ອສ້າງແຜນການລວມ ແລະ ແຜນການລະອຽດສຳລັບການສະ

ເຫລີມສະຫລອງແຕ່ລະວັນດັ່ງກ່າວ ເພື່ອເປັນບ່ອນອີງໃຫ້ ແຕ່ລະຂັ້ນປະຕິບັດ, ແຜນການລະອຽດທີ່ຈະຈັດຕັ້ງສະຫລອງ ແຕ່ລະເທື່ອນຕ້ອງແຈ້ງໃຫ້ພາກສ່ວນຕ່າງໆ ທີ່ຂຶ້ນກັບຕົນນັ້ນຮູ້ກ່ອນ 2 ເດືອນໂດຍມີການປຸກລະດົມຊຸກຍູ້ໃຫ້ເປັນຂະບວນການ ຟົດຟື້ນ ແລະ ມີປະສິດທິຜົນຕົວຈິງ.

- ບັນດາໜັງສືພິມ, ວິທະຍຸ, ໂທລະພາບ, ແລະ ຂ່າວສານ ປະເທດລາວຕ້ອງມີລາຍການ, ບົດຕ່າງໆ ທີ່ຂຽນ ສະເພາະໃຫ້ແຕ່ລະວັນດັ່ງກ່າວ.

- ກະຊວງຖະແຫລງຂ່າວ - ວັດທະນະທຳ, ຕ້ອງຈັດຕັ້ງການເຄື່ອນໄຫວສິລະປະວັນນະຄະດີ, ວາງສະແດງ, ສາຍຟິມຮູບເງົາ, ຟິມວີດີໂອ, ພິມຈຳໜ່າຍປຶ້ມ, ປ້າຍໂຄສະນາ, ຮູບພາບ ປຸກລະດົມ ແລະ ຄຳຂວັນຕ່າງໆ ຮັບໃຊ້ໃຫ້ແກ່ການລະນຶກ ວັນເກີດຂອງ ວ.ອ. ເລນິນ ຄົບຮອບ 120 ປີ.ພົວພັນກັບສະຖານທູດ ສ.ສ ຫວຽດນາມ ແລະ ອົງການ ຢູເນັດສະໂກ ປະຈຳລາວເພື່ອປະສານສົມທົບຈັດຕັ້ງການ ສະຫລອງວັນເກີດ ຂອງປະທານ ໂຮຈິມິນຄົບຮອບ 100 ປີ ໃຫ້ໄດ້ດີ.

3/- ວຽກງານຈັດຕັ້ງຮ່ຳຮຽນ ແລະ ຄົ້ນຄວ້າ ທິດສະດີ.

- ແຕ່ລະວັນລະນຶກ ຕ້ອງມີການຈັດຕັ້ງດຳເນີນ ຊີວິດການເມືອງຢ່າງເລິກເຊິ່ງ ໂດຍໃຊ້ຮູບການສຳມະນາ ໄລຍະ

ສົມ. ເນັ້ນໃສ່ໃຫ້ເຊື່ອມຊຶມແນວທາງຂອງພັກໃນ ໄລຍະໃໝ່ ຂອງການປະຕິວັດ, ຈາກຂະບວນການສະເຫລີມສະຫລອງວັນສຳຄັນໆ ໄປເຖິງວັນສຳຄັນອັນໃໝ່ ໃຫ້ເປັນຂະບວນການ ອັນຟົດຟື້ນຂື້ນເລື້ອຍໆ.

ຄະນະໂຄສະນາອົບຮົມສູນກາງມີໜ້າທີ່ສ້າງເອກະສານຮັບໃຊ້ແຕ່ລະບັ້ນດຳເນີນຊີວິດການເມືອງ, ກະກຽມບຳລຸງ ພະນັກງານເຮັດການສຳມະນາ ແລະ ຜູ້ເຮັດປາຖະກະຖາ ແລະ ແນະນຳວິທີຈັດຕັ້ງປະຕິບັດໃຫ້ແຕ່ລະຂັ້ນ.

- ໃຫ້ຈັດຕັ້ງປາຖະກະຖາຢູ່ບັນດາສຳນັກງານອົງການ, ກອງທະຫານ, ຕຳຫລວດ, ໂຮງງານ, ໂຮງຮຽນ, ໂຮງໝໍ, ຮາກຖານການຜະລິດທຸລະກິດຕ່າງໆ. ເນື້ອໃນປາຖະກະຖາ ແມ່ນຄະນະໂຄສະນາອົບຮົມສູນກາງເປັນຜູ້ສະໜອງໃຫ້. ສະເພາະມື້ລະນຶກວັນເກີດຂອງທ່ານ ເລນິນ ແລະ ປະທານໂຮຈິມິນ ຄວນພົວພັນກັບສະຖານທູດໂຊວຽດ ແລະ ຫວຽດນາມ ເພື່ອເຮັດໃຫ້ການສະຫລອງບັນດາວັນສຳຄັນໃຫ້ດີ ( ຄະນະຊີ້ນຳຈະໄດ້ເຊີນຄະນະຜູ້ແທນສະມາຄົມມິດຕະພາບລາວ -ໂຊວຽດ, ລາວ - ຫວຽດນາມ ມາຮ່ວມ ).

- ໂຮງຮຽນພັກຂັ້ນສູງ ໂດຍສົມທົບກັບຄະນະໂຄສະນາອົບຮົມສູນກາງພັກ, ຄະນະກຳມະການວິທະຍາສາດ ສັງຄົມ, ວາລະສານອະລຸນໃໝ່ ນອກຈາກສືບຕໍ່ການສຳມະນາ ເພື່ອເຊື່ອມຊຶມແນວທາງນະໂຍບາຍຂອງພັກເຮົາແລ້ວ, ຍັງ ຕ້ອງ

ຈັດຕັ້ງການຄົ້ນຄວ້າສອງຫົວເລື່ອງກ່ຽວກັບທິດສະດີ: ນະໂຍບາຍເສດຖະກິດແຜນໃຫມ່ ( ເນັບ ) ຂອງເລນິນ ແລະ ການຫມູນໃຊ້ມັນເຂົ້າໃນເງື່ອນໄຂຕົວຈິງຂອງລາວ; ຄຸນສົມບັດປະຕິວັດ ແລະ ແບບແຜນດຳລົງຊີວິດຂອງເລນິນ ຜູ້ຍິ່ງໃຫຍ່ ແລະ ຂອງ ປະທານໂຮຈິມິນ.

4/- <u>ທິດນຳໃນການສະເຫລີມສະຫລອງ</u>:

- ຢູ່ນະຄອນຫລວງວຽງຈັນ ແລະ ທ້ອງຖິ່ນຕ່າງໆ ໃຫ້ຈັດຕັ້ງສະເຫລີມສະຫລອງຢ່າງຄຶກຄື້ນ, ມີເນື້ອໃນ ທີ່ ແທດເຫມາະກັບຕົວຈິງ, ຍູ້ຂະບວນການວຽກງານຕ່າງໆ, ຫລີກເວັ້ນການຟູມເຟືອຍ ແລະ ເຮັດພຽງແຕ່ເປັນຮູບການ, ໃຫ້ຈັດຕັ້ງຕະຫລາດນັດ, ການແຂ່ງຂັນກິລາ ແລະ ສິລະປະວັນນະຄະດີ ໂດຍຮັບປະກັນຄວາມສະຫງົບ ແລະ ປອດໄພ. ສະເພາະການສະຫລອງວັນຊາດຄົບຮອບ 15 ປີ, ຢູ່ນະຄອນຫລວງວຽງຈັນໃຫ້ຈັດການສະແດງຜົນງານເດີນສວນສະຫນາມຂອງມວນຊົນ. ສ່ວນທ້ອງຖິ່ນຕ່າງໆແມ່ນໃຫ້ຈັດຕັ້ງງານໂຮມຊຸມນຸມມິດຕິງ ແລະ ມີການເຄື່ອນໄຫວອື່ນໆ ຄຶກກາວມ່ວນ.

5/- <u>ວຽກງານແຂ່ງຂັນ</u>:

ນັບແຕ່ວັນທີ 1/1/1990 ຈະຈັດຕັ້ງການປຸກລະດົມແຂ່ງຂັນສ້າງເປັນຂະບວນການເພື່ອຄຳນັບຮັບຕ້ອນ 4 ວັນ<u>ລະນຶກໃຫຍ່</u>.

ຈຸດປະສົງລະດັບຄາດໝາຍແມ່ນ ເອົາກົມກອງ, ຫົວໜ່ວຍເສດຖະກິດ, ວັດທະນະທຳ - ສັງຄົມ ແລະ ຫົວໜ່ວຍການຜະລິດທຸລະກິດຂອງບັນດາຂະແໜງການ ແລະ ຢູ່ຮາກຖານເປັນບ່ອນແຂ່ງຂັນ ເພື່ອແນໃສ່ເຮັດສຳເລັດ ບັນດາໜ້າທີ່ທີ່ສູນກາງພັກ ແລະ ສະພາລັດຖະມົນຕີວາງອອກ ໃນປີ 1989 - 90 ໂດຍອີງຕາມໜ້າທີ່ການເມືອງຂອງຂະແໜງການ, ທ້ອງຖິ່ນ, ກົມກອງຂອງຕົນ.

ແຕ່ລະສຳນັກງານອົງການ, ກົມກອງ, ອີງໃສ່ໂຄງການແຜນການວຽກງານຕົວຈິງແຕ່ລະເດືອນຂອງກົມກອງຕົນ ເພື່ອວາງຄາດໝາຍຕົວຈິງໃນແຕ່ລະບັ້ນແຂ່ງຂັນ, ຈຸດເລີ່ມ ແມ່ນເອົາບັນດາວັນລະນຶກເປັນຫລັກ, ແຕ່ລະບັ້ນແຂ່ງຂັນຕ້ອງ ມີຄາດໝາຍ ແລະ ກຳນົດເວລາຢ່າງຈະແຈ້ງ. ລະນຶກວັນໃດແລ້ວຕ້ອງມີການສະຫລຸບຖອດຖອນບົດຮຽນ, ຄັດເລືອກຕົວເດັ່ນ ແລະ ປຸກລະດົມການແຂ່ງຂັນໃຫ້ບັ້ນຕໍ່ໄປ. ພາຍຫລັງ ວັນ ທີ 1/12/1990 ຕ້ອງມີການສະຫລຸບລວມການແຂ່ງຂັນ ໝົດປີ 1990 ແລະ ມີການຍ້ອງຍໍສັນລະເສີນ. ( ສະພາປະຊາຊົນສູງສຸດກະກຽມມອບນາມມະຍົດວິລະຊົນອອກແຮງງານແລະນັກລົບແຂ່ງຂັນທົ່ວປະເທດໃນພາລະກິດປົກປັກຮັກສາແລະສ້າງສາປະເທດຊາດ ໃນວັນສະຖາປະນາປະເທດຊາດຄົບ ຮອບ 15 ປີ ):

ບັນດາອົງການຈັດຕັ້ງມະຫາຊົນ ໂດຍສະເພາະແມ່ນສູນກາງ ກຳມະບານຮັບຜິດຊອບໃນການວາງແຜນການ, ແນະນຳ ແຕ່ລະບັ້ນແຂວງຂັ້ນ, ຕິດຕາມ, ສະຫລຸບສັງລວມ ແລະ ລາຍງານໃຫ້ສູນກາງ.

6/- <u>ກ່ຽວກັບການຈັດຕັ້ງຄະນະຮັບຜິດຊອບຊີ້ນຳ</u>.

ເພື່ອຮັບປະກັນການຈັດຕັ້ງສະເຫລີມສະຫລອງບັນດາວັນສຳຄັນດັ່ງກ່າວໃຫ້ສຳເລັດຕາມຄາດໝາຍທີ່ວາງອອກນັ້ນ, ກົມການເມືອງສູນກາງພັກ ຕົກລົງຈັດຕັ້ງຄະນະຮັບຜິດຊອບ ຊີ້ນຳການຈັດຕັ້ງສະເຫລີມສະຫລອງບັນດາວັນບຸນໃຫຍ່ໃນປີ 1990 ດັ່ງນີ້:

<u>ຄະນະຮັບຜິດຊອບຊີ້ນຳປະກອບດ້ວຍ:</u>

1/- ສະຫາຍ ພູມີ ວົງວິຈິດ ກຳມະການ ກົມການເມືອງສູນກາງພັກ, ຜູ້ວ່າການແທນປະທານປະເທດເປັນ ຫົວໜ້າ.

2/- ສະຫາຍ ສີສະຫວາດ ແກ້ວບຸນພັນ ກຳມະການ ກົມການເມືອງສູນກາງພັກ, ເລຂາຄະນະພັກ ແລະ ປະທານປົກຄອງກຳແພງນະຄອນວຽງຈັນ ເປັນ ຮອງ ຫົວໜ້າ.

3/- ສະຫາຍ ຈູມມະລີ ໄຊຍະສອນ, ກຳມະການສຳຮອງ ກົມການເມືອງສູນກາງພັກ, ຮອງ ລັດຖະມົນຕີ ກະຊວງປ້ອງກັນປະເທດຜູ້ທີໜຶ່ງ ເປັນ ຮອງ ຫົວໜ້າ.

4/- ສະຫາຍ ສົມລັດ ຈັນທະມາດ ເລຂາທິການ ສູນກາງພັກ, ຫົວໜ້າຄະນະໂຄສະນາອົບຮົມສູນກາງພັກ ເປັນຮອງ ຫົວໜ້າ.

5/- ສະຫາຍ ອາຊາງ ລາວລີ ກຳມະການ ສູນກາງພັກ, ລັດຖະມົນຕີກະຊວງພາຍໃນ ເປັນ ກຳມະການ.

6/- ສະຫາຍ ນາງ ທອງວິນ ພົມວິຫານ, ກຳມະການສູນກາງພັກ, ເລຂາທີ 1 ຄະນະບໍລິຫານງານສູນກາງຊາວໜຸ່ມປະຊາຊົນປະຕິວັດລາວ ເປັນ ກຳມະການ.

7/- ສະຫາຍ ທອງ ໄຫລ ກົມມະສິດ ກຳມະການສູນກາງພັກ, ຮອງ ຫົວໜ້າກົມໃຫຍ່ການເມືອງກອງທັບ ເປັນ ກຳມະການ.

8/- ສະຫາຍ ທອງລຸນ ສີສຸລິດ, ກຳມະການສູນກາງພັກ, ຮອງ ລັດຖະມົນຕີ ກະຊວງການຕ່າງປະເທດ ເປັນກຳມະການ.

9/- ສະຫາຍ ນາງ ອ່ອນຈັນ ທຳມະວົງ ກຳມະການສູນກາງພັກ, ປະທານສະຫະພັນແມ່ຍິງລາວເປັນກຳມະການ.

10/- ສະຫາຍ ສອນ ຄຳວົງສາ ກຳມະການສຳຮອງ ສູນກາງພັກ, ຮອງລັດຖະມົນຕີກະຊວງ ຖະແຫລງຂ່າວ ແລະ ວັດທະນະທຳ ເປັນກຳມະການ.

11/- ສະຫາຍ ຈະເລີນ ເຢຍປາວເຮີ ກຳມະການສຳຮອງສູນກາງພັກ, ຮອງ ປະທານສູນກາງແນວລາວ ສ້າງຊາດ ເປັນກຳມະການ.

12/- ສະຫາຍ ວັນທອງ ແສງເມືອງ, ຮອງລັດຖະມົນຕີ, ຮອງຫົວໜ້າຫ້ອງວ່າການສະພາລັດຖະມົນຕີ ເປັນ ກຳມະການ.

13/- ສະຫາຍ ບຸນຖົນ ສູ້ວັນນະສຸກ ປະທານ ສະຫະພັນກຳມະບານລາວ ເປັນກຳມະການ.

ສ່ວນຢູ່ຂັ້ນແຂວງ, ກຳແພງນະຄອນກໍ່ໃຫ້ຈັດຕັ້ງ ຄະນະຮັບຜິດຊອບຊີ້ນຳການສະເຫລີມສະຫລອງຂອງຕົນຢ່າງຄົບຊຸດ.

ຄະນະຮັບຜິດຊອບຊັ້ນສູງມີໜ້າທີ່ ຮັບຜິດຊອບຕໍ່ ສູນກາງ ແລະ ສະພາລັດຖະມົນຕີໃນການຈັດຕັ້ງ ແລະ ນຳພາ ການເຄື່ອນໄຫວທັງໝົດຂອງບັນດາວັນບຸນໃຫຍ່ ແລະ ມີສິດ ກວດກາການເຄື່ອນໄຫວຂອງທຸກຂະແໜງການ, ທຸກຂັ້ນ ໃນການຮັບໃຊ້ວັນສະເຫລີມສະຫລອງໃຫ້ໄດ້ຮັບຜົນດີ. ທຸກແຜນນະໂຍບາຍ, ແຜນການເຄື່ອນໄຫວຂອງບັນດາຂະແໜງການ ເພື່ອຮັບໃຊ້ວັນລະນຶກດັ່ງກ່າວລ້ວນແຕ່ຕ້ອງຜ່ານຄະນະຮັບຜິດຊອບຊີ້ນຳການສະເຫລີມສະຫລອງວັນບຸນໃຫຍ່ນີ້.

ເມື່ອໄດ້ຮັບມະຕິຕົກລົງສະບັບນີ້ແລ້ວ, ຄະນະຮັບຜິດຊອບຊີ້ນຳສະເຫລີມສະຫລອງວັນບຸນຂັ້ນສູນກາງ, ແຂວງແລະ

ກຳແພງນະຄອນ, ບັນດາທ່ານ ລັດຖະມົນຕີ, ຄະນະ ກຳມະການປົກຄອງແຂວງ, ກຳແພງນະຄອນຕ້ອງຈັດຕັ້ງ ປະຕິບັດຢ່າງເຂັ້ມງວດ.

ມະຕິຕົກລົງສະບັບນີ້ມີຜົນສັກສິດນັບແຕ່ມື້ໄດ້ລົງລາຍເຊັນ ເປັນຕົ້ນໄປ.

ວຽງຈັນ, ວັນທີ 21 ເດືອນ 6 ປີ [illegible]

ຕ. ນ. [illegible] ສູນກາງ ພັກປະຊາຊົນປະຕິວັດລາວ




ຄຳໄຕ ສີພັນດອນ

# ວັນຊາດທີ 2 ທັນວາຄົບຮອບ 14 ປີ

ປີນີ້ ທົ່ວພັກ, ທົ່ວກອງທັບ, ທົ່ວປວງຊົນພວກເຮົາພາກັນສະເຫລີມສະຫລອງວັນຊາດທີ 2 ທັນວາຄົບຮອບ 14 ປີ ໃນທ່າມກາງສະພາບການແຫ່ງການຫັນປ່ຽນໃຫມ່ຢ່າງຮອບດ້ານ. ຢູ່ໃນທົ່ວປະເທດຂອງພວກເຮົາ ໂຄງປະກອບ ເສດຖະກິດໃຫມ່, ກົນໄກຄຸ້ມຄອງໃຫມ່, ກົງຈັກການຈັດຕັ້ງໃຫມ່ ແລະ ແບບແຜນວິທີເຮັດວຽກໃຫມ່ ພວມ ໄດ້ຮັບການຊຸກຍູ້, ສົ່ງເສີມໃຫ້ປະກົດເປັນຮູບເປັນຮ່າງຂຶ້ນ. ແຜນນະໂຍບາຍ ກ່ຽວກັບການຫັນປ່ຽນເສດຖະກິດທໍາມະຊາດ, ເຄິ່ງທໍາມະຊາດ ໄປສູ່ເສດຖະກິດຜະລິດສິນຄ້າ ແລະ ເປີດກວ້າງການພົວພັນ ເສດຖະກິດກັບຕ່າງປະເທດ ພວມໄດ້ເຊື່ອມຊຶມ ແລະ ຈັດຕັ້ງປະຕິບັດໃນທຸກຂົງເຂດເສດຖະກິດ, ທຸກຫົວຫນ່ວຍຮາກຖານ ການຜະລິດ ແລະ ໃນຫມູ່ປະຊາຊົນທຸກເຜົ່າ. ໃນຂະບວນ ວິວັດແຫ່ງການຈັດຕັ້ງປະຕິບັດແຜນນະໂຍບາຍດັ່ງກ່າວນັ້ນພວກເຮົາມີທັງຄວາມສະດວກ, ຄວາມຫຍຸ້ງຍາກ, ມີທັງຜົນງານ, ຈຸດອ່ອນ ແລະ ຂໍ້ຄົງຄ້າງຫລາຍຢ່າງຊຶ່ງຈະຕ້ອງໄດ້ສໍາຫລວດຄືນເພື່ອຫາວິທີແກ້ແປງ, ແກ້ໄຂ, ຫາວິທີຈັດຕັ້ງປະຕິບັດໃຫ້ ມັນ

ສອດຄ່ອງ, ແທດເໝາະ ແລະ ມີປະສິດທິຜົນກວ່າເກົ່າ, ເໜ ໃສ່ເຮັດໃຫ້ໂຄງປະກອບເສດຖະກິດໃໝ່, ກົນໄກຄຸ້ມຄອງໃໝ່, ການຈັດຕັ້ງປະຕິບັດອັນໃໝ່ໄດ້ຮັບການປະຕິບັດຢ່າງມີໝາກຜົນ, ຊຸກຍູ້ການຜະລິດສິນຄ້າໃຫ້ບັນບັ້ນຂະຫຍາຍຕົວ, ເຂົ້າເສດຖະກິດຂອງພວກເຮົາຕິດພັນກັບເສດຖະກິດໂລກແລະນຳເຂົ້າປະເທດຂອງພວກເຮົາຄ່ອຍໆ ຫລຸດພົ້ນ ອອກຈາກຄວາມຫລ້າຫລັງ ເຮັດໃຫ້ລະບອບປະຊາທິປະໄຕປະຊາຊົນໄດ້ຮັບການປັບປຸງ, ຂະຫຍາຍ ແລະ ບູລະນະເພື່ອກ້າວຂຶ້ນ ສັງຄົມນິຍົມເທື່ອລະກ້າວ.

## 7 - ຜົນງານ ແລະ ໄຊຊະນະຂອງພວກເຮົາໃນປີຜ່ານມາມີອັນໃດແດ່ ?

### 1/- ດ້ານວຽກງານປ້ອງກັນຊາດ - ປ້ອງກັນຄວາມສະຫງົບ.

ປະຊາຊົນບັນດາເຜົ່າໄດ້ສາມັກຄີກັນທັບມ້າງທຸກກົນອຸບາຍການກໍ່ຄວາມວຸ້ນວາຍ ແລະ ການຫັນປ່ຽນໂດຍສັນຕິຂອງ ສັດຕູ, ປົກປັກຮັກສາອຳນາດອະທິປະໄຕ, ປົກປັກຮັກສາລະບອບໃໝ່ໄວ້ໄດ້ຢ່າງໝັ້ນຄົງ, ເຮັດໃຫ້ຄວາມເປັນລະບຽບ ຮຽບຮ້ອຍໃນສັງຄົມຢູ່ພາຍໃນປະເທດມີຄວາມສະຫງົບ. ພວກເຮົາໄດ້ໝູນໃຊ້ຍຸດໂທບາຍຢ່າງຄ່ອງແຄ່ວ ເຮັດໃຫ້ສະພາບການຢູ່ລຽບຕາມຊາຍແດນມີຄວາມໂຍະຍານ, ຮູ້ປະສານ ສົມທົບແໜ້ນລະຫວ່າງການເຄື່ອນໄຫວທາງດ້ານການທະຫານ, ການ

ເມືອງ, ການຕ່າງປະເທດ. ໃນວຽກງານຫັນລົງ ຮາກຖານ ສຶກສາອົບຮົມເຊີດຊູນ້ຳໃຈຮັກຊາດ, ຮັກລະບອບໃໝ່, ສະຕິປະຊາທິປະໄຕ ກໍໄດ້ຮັບໝາກຜົນອັນດີ; ພວກເຮົາໄດ້ປັບປຸງບູລະນະລະບົບອຳນາດປະຊາທິປະໄຕປະຊາຊົນ, ອົງການພັກ, ລັດ, ອົງການຈັດຕັ້ງມະຫາຊົນທຸກຂັ້ນຢູ່ແຕ່ລະທ້ອງຖິ່ນ ແລະ ຮາກຖານໃຫ້ມີການເຄື່ອນໄຫວທີ່ມີປະສິດທິຜົນກວ່າເກົ່າ.

2/- <u>ດ້ານເສດຖະກິດ</u>: ພວກເຮົາໄດ້ຜັນຂະຫຍາຍຂະບວນການແຫ່ງການປ່ຽນແປງໃໝ່ຢ່າງຮອບດ້ານນັບແຕ່ຈິນຕະນາການ, ໂຄງປະກອບເສດຖະກິດ, ກົນໄກຄຸ້ມຄອງ, ການຈັດຕັ້ງປະຕິບັດ ແລະ ແບບແຜນວິທີເຮັດວຽກ.

- ດ້ານກະສິກຳ ພວກເຮົາໄດ້ປະຕິບັດແຜນ ນະໂຍບາຍມອບດິນມອບປ່າໃຫ້ຊາວກະສິກອນ, ປະຕິບັດການມອບເໝົາລົງເຖິງຄອບຄົວຊາວກະສິກອນ, ຫັນສະຫະກອນໄປສູ່ການ ທຸລະກິດຫລາຍຂະແໜງອາຊີບ, ເຮັດການບໍລິການ ສອງສົ້ນເຖິງຄອບຄົວຊາວກະສິກອນ, ອັນໄດ້ຊຸກຍູ້ຂະບວນການ ບຸກເບີກນາໃໝ່, ການຟື້ນຟູນາເຮືອ, ການເຮັດກະເສດ ສຸມ, ການຍົກຜະລິດຕະພາບ, ການສົ່ງເສີມເສດຖະກິດຄອບຄົວໃຫ້ເປັນຂະບວນຟົດຟື້ນໃນທົ່ວປະເທດ. ສັດລ້ຽງ ທຸກປະເພດ, ການປູກຕົ້ນໄມ້ອຸດສາຫະກຳຈຳນວນໜຶ່ງເຊັ່ນ: ກາເຟ, ໝາກແໜ່ງ, ຢາສູບ. ກໍໄດ້ເພີ່ມຂຶ້ນ, ພືດທາດແປ້ງໄດ້ຮັບການສົ່ງເສີມ. ການລົງທຶນຂອງລັດໃສ່ດ້ານກະສິກຳໄດ້ເພີ່ມຂຶ້ນ

ກວ່າເກົ່າ, ຂະບວນທຳການຜະລິດດ້ານກະສິກຳກໍ່ມີ ຫລາຍ
ປັດໃຈໃຫມ່ເກີດຂຶ້ນເປັນຕົ້ນແມ່ນຂະບວນເຮັດນາແຊງ, ເຮັດ
ກະເສດສຸມ ແລະ ປູກຕົ້ນໄມ້ ອຸດສາຫະກຳ, ຜະລິດຕະພາບ
ກໍສູງຂຶ້ນກວ່າເກົ່າ.

- <u>ດ້ານອຸດສາຫະກຳ</u>: ພວກເຮົາໄດ້ປະຕິບັດ ນະໂຍ
ບາຍສັບຊ້ອນການຜະລິດຄືນໃຫມ່ຢູ່ບັນດາໂຮງຈັກ, ໂຮງງານ,
ຫັນຫົວຫນ່ວຍເສດຖະກິດຕ່າງໆຂອງລັດໄປສູ່ທຸລະກິດ. ການຜະ
ລິດທຸລະກິດໃນບາງຮາກຖານໄດ້ມີປະສິດທິຜົນ ຢ່າງຈະແຈ້ງ,
ຜະລິດຕະພາບຂອງງານ, ຕົວເລກເງິນເດືອນ, ການມອບພັນ
ທະເຂົ້າງົບປະມານໄດ້ມີການເພີ່ມຂຶ້ນ. ມີຫລາຍໂຮງຈັກໂຮງ
ງານໄດ້ຮັບການຂະຫຍາຍ ແລະ ມີການປັບປຸງໃຫ້ສອດຄ່ອງ
ຕາມເງື່ອນໄຂ ແລະ ຄວາມສາມາດຕົວຈິງ, ຄຸນນະພາບຂອງ
ຜະລິດຕະພັນດີກວ່າເກົ່າ.

- ດ້ານຄົມມະນາຄົມຂົນສົ່ງ ແລະ ໄປສະນີໄດ້ມີຄວາມພະ
ຍາຍາມຫລາຍປະການໃນການກໍ່ສ້າງ ແລະ ສ້ອມແປງ ຂົວ,
ທາງ ຢູ່ບາງທ້ອງຖິ່ນໄດ້ມີການສົມທົບທຶນຮອນລະຫວ່າງລັດກັບ
ປະຊາຊົນ ຫລື ວາລັດກັບເອກະຊົນ, ເຮັດໃຫ້ການຄົມມະ ນາ
ຄົມໄດ້ຮັບການເປີດກວ້າງກວ່າເກົ່າ, ບາງບ່ອນ, ບາງທ້ອງ
ຖິ່ນໄດ້ນຳໃຊ້ຮູບການປະມູນ, ມອບເຫມົາ ແລະ ນຳໃຊ້ ກຳ
ລັງຂົນສົ່ງຂອງເອກະຊົນ. ພ້ອມກັນນັ້ນພວກເຮົາໄດ້ຍາດແຍ່ງ
ການຊ່ວຍເຫລືອ ສາກົນເພື່ອຮັບໃຊ້ໃຫ້ການຍົກລະດັບ, ການ
ເປີດກວ້າງ ແລະ ການສ້າງຕາຫນ່າງໂທລະຄົມມະນາຄົມໃຫມ່.

- ຂົງເຂດແຈກຢາຍຈໍລະຈອນ. ພວກເຮົາໄດ້ ປະຕິບັດແຜນນະໂຍບາຍຈໍລະຈອນສິນຄ້າເສລີຖືກກົດໝາຍ, ປະຕິບັດກົນໄກຕະຫລາດ, ກົນໄກລາຄາດຽວ; ຫັນໄປສູ່ການ ເບີກຈ່າຍເງິນເດືອນເປັນເງິນສົດ, ຫັນການເຄື່ອນໄຫວຂອງ ຂະແໜງທະນາຄານໄປສູ່ທຸລະກິດດ້ວຍການສ້າງລະບົບ ທະນາຄານ 2 ຂັ້ນ: ທະນາຄານແຫ່ງລັດ ແລະ ທະນາຄານ ທຸລະກິດ. ບັນດາບໍລິສັດ, ບັນດາວິສາຫະກິດໄດ້ເປັນເຈົ້າ ຕົນເອງທາງດ້ານການເງິນ ແລະ ແຜນການ. ສະພາວະ ການອັດຕັນເສັ້ນທາງເກືອດຫ້າມຕະຫລາດ, ກົດໜີບລາຄາ, ການແຊກແຊງຢ່າງຫຍາບຊ້າ ຂອງອົງການຄຸ້ມຄອງລັດ ເຂົ້າ ໃນການຜະລິດ, ການຈໍລະຈອນໄດ້ຫລຸດຜ່ອນລົງ. ສະຫະກອນທີ່ເຮັດທຸລະກິດຫລາຍຂະແໜງການອາຊີບ ແລະ ຕະຫລາດຊົນນະບົດໄດ້ສືບຕໍ່ຂະຫຍາຍຕົວຫລາຍແຫ່ງ. ສະພາວະຂາດແຄນສິນຄ້ານັບທັງສິນຄ້າຍຸດທະສາດກໍ່ໄດ້ຮັບການແກ້ໄຂໂດຍ ພື້ນຖານ. ການຄ້າບາງບ່ອນໄດ້ເລີ່ມປະກອບສ່ວນສ້າງກຸ່ມ ເສດຖະກິດ - ເຕັກນິກດ້ວຍການເຮັດໜ້າທີ່ບໍລິການສອງສົ້ນ, ຮູບແບບສະຫະກອນ ຊື້ຂາຍ ເກີດຂຶ້ນຫລາຍແຫ່ງ.

- ດ້ານການສຶກສາ, ວັດທະນະທຳ ແລະ ສາທາ ລະນະສຸກ, ພວກເຮົາໄດ້ເອົາໃຈໃສ່ຂະຫຍາຍການສຶກສາ, ວັດທະນະທຳ ແລະ ສາທາລະນະສຸກ. ເນື້ອໃນການສຶກສາກໍ່ໄດ້ມີການປ່ຽນແປງໃຫ້ສອດຄ່ອງກັບໄລຍະໃໝ່, ນັກຮຽນນັບແຕ່

ຂັ້ນປະຖົມຮອດອຸດົມ ໄດ້ເພີ່ມຂຶ້ນ. ໂຮງຮຽນປະຖົມ, ມັດທະຍົມ ແລະ ອຸດົມໄດ້ຂະຫຍາຍຕົວ, ແຕ່ລະແຂວງໄດ້ມີ ໂຮງຮຽນອຸດົມ, ມີໂຮງຮຽນອາຊີວະສຶກສາຊັ້ນກາງ ແລະ ບາງເມືອງກໍ່ມີຮອດໂຮງຮຽນອຸດົມ. ຢູ່ຂັ້ນເມືອງໄດ້ມີ ໂຮງໝໍຂອງເມືອງ, ມີແພດຊັ້ນສູງ ແລະ ຊັ້ນກາງປະຈຳຂັ້ນຕາແສງ ແລະ ບານກໍໄດ້ສ້າງສຸກສາລາຂອງຕົນຂຶ້ນ, ຂະບວນການອະນາໄມ 3 ສະອາດຕ້ານຍຸງລາຍ ແລະ ໄຂ້ເລືອດອອກ ໄດ້ກາຍເປັນໜ້າທີ່ຂອງພົນລະເມືອງລາວທຸກຄົນ. ໃນປີຜ່ານມາພວກເຮົາໄດ້ຟື້ນຟູວັດທະນະທຳທີ່ມີລັກສະນະຊາດແລະກ້າວໜ້າສົມທົບກັບຍຸກສະໄໝ. ແຕ່ລະແຂວງ, ເມືອງໄດ້ມີໂຮງຮູບເງົາ, ວີດີໂອ, ມີໜ່ວຍສິລະປະອາຊີບ ແລະ ສະໝັກຫຼິ້ນ, ໜ່ວຍລຳເລື່ອງແບບພື້ນເມືອງຂອງແຕ່ລະເຜົ່າຊຶ່ງໄດ້ຮັບການນິຍົມຊົມຊອບຈາກມວນຊົນຢ່າງຫຼວງຫຼາຍ.

- ດ້ານວຽກງານຕ່າງປະເທດ, ພັກ - ລັດ ພວກເຮົາໄດ້ມີແຜນນະໂຍບາຍເປີດກວ້າງການພົວພັນກັບຕ່າງປະເທດ, ເຮັດໃຫ້ນັກລົງທຶນ ແລະ ນັກທຸລະກິດຕ່າງປະເທດຫຼາຍ ບໍລິສັດ ໄດ້ເຂົ້າມາລົງທຶນຢູ່ລາວ. ການພົວພັນລະຫວ່າງ ສ.ປ.ປ.ລາວ ກັບ ຫວຽດນາມ, ກຳປູເຈຍ, ສະຫະພາບ ໂຊວຽດ ແລະ ບັນດາປະເທດສັງຄົມນິຍົມອ້າຍນ້ອງ ໄດ້ ຂະຫຍາຍໄປສູ່ລວງເລິກ, ໂດຍສະເພາະແມ່ນການພົວພັນ ແບບພິເສດກັບຫວຽດນາມ ແລະ ກຳປູເຈຍ. ພວກເຮົາໄດ້ພະຍາ

ຍາມຢ່າງສຸດຂີດ ເພື່ອເຮັດໃຫ້ສະພາບການເຄັ່ງຕຶງ ຢູ່ ຕາມຊາຍແດນ ລະຫວາງ 2 ປະເທດ ລາວ - ໄທມີ ການໂຍະຍານ, ການໄປມາຫາສູ່ກັນລະຫວາງປະຊາຊົນລາວ-ໄທກໍໄດ້ເຂົ້າສູ່ຄວາມເປັນປົກກະຕິ ແລະ ດີກວ່າເກົ່າ.

## II - ບັນຫາທີ່ຍັງອ່ອນ ແລະ ຄົງຄ້າງຂອງ ພວກເຮົາໃນປີຜ່ານມານີ້ຫຍັງແດ່ ?

1/- ວຽກງານປ້ອງກັນຊາດ - ປ້ອງກັນຄວາມສະຫງົບ, ພວກເຮົາເຮັດບໍ່ທັນດີເທົ່າທີ່ຄວນເປັນຕົ້ນແມ່ນຢູ່ ຮາກຖານ ລຽບຕາມຊາຍແດນຝັ່ງຕາເວັນຕົກ, ເຂດຊົນເຜົ່າແລະເຂດຊົນນະບົດບໍ່ທັນມີຄວາມສະຫງົບໝັ້ນແໜ້ນ, ສະຕິລະວັງຕົວຂອງພວກເຮົາຕໍ່ກົນອຸບາຍຫັນປຽນໂດຍສັນຕິຂອງສັດຕູ ຍັງຕ່ຳ.

2/- ວຽກງານກະສິກຳ - ປ່າໄມ້ ເບິ່ງທົ່ວໄປແລ້ວແມ່ນຍັງຂຶ້ນກັບທຳມະຊາດຢູ່, ຫລາຍທ້ອງຖິ່ນຍັງບໍ່ທັນປະຕິບັດຕາມທິດທາງແຜນນະໂຍບາຍຂອງພັກທີ່ວ່າ: ຫັນເສດຖະ ກິດທຳມະຊາດ ແລະ ເຄິ່ງທຳມະຊາດໄປສູ່ເສດຖະກິດຜະລິດສິນຄ້າ, ຍັງບໍ່ຖືວຽກງານກະສິກຳເປັນສະໜາມຮົບອັນດັບໜຶ່ງ, ການສ້າງແຜນການ ການຜະລິດແຕ່ຄອບຄົວຂຶ້ນມາຍັງບໍ່ທັນປະຕິບັດດີເທົ່າທີ່ຄວນ.

ຂະບວນການຫັນປ່ຽນຈາກການເຮັດໄຮ່ລ້ຽງມາ ເຮັດນາ ແລະ ຈຳກັດການຖາງປ່າເຮັດໄຮ່ ເຖິງວ່າໄດ້ມີການຫັນປ່ຽນ

ແດ່, ແຕ່ຍັງບໍ່ທັນເປັນອັນແຜ່ຫລາຍທົ່ວໄປໃນທົ່ວປະເທດເທື່ອ. ການປູກຕົ້ນໄມ້ອຸດສາຫະກຳພວມຢູ່ໃນສະພາວະປູກແບບ ກະແຈກກະຈາຍ, ບໍ່ທັນກາຍເປັນການຜະລິດສິນຄ້າເທື່ອ. ການນຳໃຊ້ເຕັກນິກກະເສດສູ່ຍັງບໍ່ທັນກາຍເປັນຄວາມຊິນເຄີຍ ທີ່ແຜ່ຫລາຍທົ່ວໄປ, ການລ້ຽງສັດຢູ່ໃນຫລາຍແຂວງລ້ວນແຕ່ປະເຊີນກັບພະຍຸ ແລະ ພະຍາດສັດ ການທຳລາຍປ່າ, ການຂຸດຄົ້ນໄມ້ຍັງອິກກະທິກຄິກໂຄມ, ແຕ່ລາຍໄດ້ຈາກການຂຸດຄົ້ນໄມ້ຊ້ຳພັດບໍ່ແບ່ງໃສ່ໃນການບູລະນະ ແລະ ການປູກປ່າຄືນໃໝ່.

3/- ດ້ານອຸດສາຫະກຳ ມີປະກົດການທີ່ແຜ່ຫລາຍ ຄື: ໂຮງຈັກໂຮງງານບໍ່ທັນນຳໃຊ້ສະມັດຖະພາບຂອງມັນໄດ້ໝົດ, ສ່ວນຫລວງຫລາຍແມ່ນນຳໃຊ້ພຽງແຕ່ 40 - 50% ຂອງຄວາມສາມາດຂອງເຄື່ອງຈັກ. ການຂະຫຍາຍຕົວດ້ານອຸດສາຫະກຳຂອງພວກເຮົາຍັງບໍ່ທັນພຽງພໍກັບຄວາມຕ້ອງການ ຂອງຕະຫລາດ. ຜະລິດຕະພັນທີ່ພວກເຮົາຜະລິດອອກມານັ້ນລາຄາສຳເລັດຮູບຊ້ຳພັດສູງ ເຮັດໃຫ້ການຈຳໜ່າຍສິນຄ້າ ແລະ ການແກ່ງແຍ່ງກັບຕະຫລາດບໍ່ທັນໄດ້ດີ.

4/- ວຽກງານດ້ານມະນາຄົມຂົນສົ່ງ: ບໍ່ທັນເອົາໃຈໃສ່ການສ້ອມແປງ ຂົວ, ທາງທີ່ເປ່ເພ, ຂາດການກວດກາ. ການນຳໃຊ້ທຶນທີ່ສາກົນຊ່ວຍເຫລືອບໍ່ທັນດີເທົ່າທີ່ຄວນ, ການປະກອບພາຫະນະລຳລຽງຂົນສົ່ງຍັງບໍ່ທັນພຽງພໍ, ການບໍລິ ການທາງໂທລະຄົມ ແລະ ໄປສະນີຍັງຊັກຊ້າບໍ່ທັນຕອບ ສະໜອງ

ຕາມຄວາມຕ້ອງການຂອງສັງຄົມ, ການຂະຫຍາຍເສັ້ນທາງໃຫມ່ນັ້ນຍັງບໍ່ທັນປະຕິບັດຕາມທິດທີ່ວ່າລັດກັບປະຊາຊົນພ້ອມກັນເຮັດ.

5/- ຂົງເຂດແຈກຢາຍຈໍລະຈອນ: ການແຈກຢາຍຈໍລະຈອນສ່ວນຫລາຍແມ່ນເຄື່ອນໄຫວຢູ່ອ້ອມແອ້ມຕົວເມືອງ, ລຽບຕາມແມ່ນໍ້າໃຫຍ່ ແລະ ຕາມຊາຍແດນ, ສ່ວນເຂດຊົນນະບົດ, ເຂດສອກຫລີກຫ່າງໄກຍັງບໍ່ທັນເອົາໃຈໃສ່ເທົ່າທີ່ຄວນ, ຍັງບໍ່ທັນປະຕິບັດຕາມຄໍາຂວັນທີ່ວ່າຫັນກວຽກງານຕ້ອງຫັນໄປສູ່ເຂດຊົນນະບົດ, ຂຶ້ນໄປເຂດພູດອຍລົງເຖິງຮາກຖານ; ຊໍ້າບໍ່ຫນໍາ ນະໂຍບາຍກຽວກັບການຈໍລະຈອນສິນຄ້າແບບເສລີ ຖືກກົດຫມາຍຍັງຖືກສວຍໃຊ້, ລັດຍັງລະເຫລີງໃນການຄຸ້ມຄອງແລະກວດກາ. ສະພາວະດໍາເນີນທຸລະກິດໂດຍບໍ່ຂຶ້ນທະບຽນ, ລັກພາສີ, ຫນີພາສີ ຍັງແຜ່ຫລາຍ, ການຄ້າຂອງລັດ, ຂອງສະຫະກອນປະສົບຄວາມຫຍຸ້ງຍາກຍ້ອນຖືກກົດດັນຈາກ ການຄ້າເຖື່ອນ ແລະ ການແລກປ່ຽນທີ່ບໍ່ມີລະບຽບຕາມຊາຍແດນ. ລັດກໍາເງິນ, ກໍາສິນຄ້າບໍ່ໄດ້, ນັບທັງສິນຄ້າຍຸດທະສາດ, ສະນັ້ນຈຶ່ງເຮັດໃຫ້ລັດຂາດແຄນເງິນສົດ, ແຕ່ກົງກັນຂ້າມເງິນສົດຊໍ້າພັດຈໍລະຈອນຢູ່ທ້ອງຕະຫລາດພາໃຫ້ເງິນກີບຕົກລາຄາ. ພ້ອມກັນນັ້ນການຄ້າລັດຍັງບໍ່ທັນປະຕິບັດຕາມທິດທີ່ວ່າ: ເປັນ ຜູ້ຄ້າໃຫຍ່, ຊື້ຫມົດ, ຂາຍຍົກ, ຊື້ເຖິງກົກ - ຂາຍເຖິງປາຍ.

ການຂາເຂົ້າ - ຂາອອກຍັງເຮັດບໍ່ທັນໄດ້ດີເທົ່າທີ່ຄວນ

ເປັນຕົ້ນແມ່ນຂາເຂົ້າ ຂາດການຄຸ້ມຄອງ ແລະ ກວດກາ, ປະໃຫ້ສິນຄ້າເຂົ້າມາຢ່າງບໍ່ເລືອກເປົ້າໝາຍ, ເຮັດໃຫ້ການຜະລິດຢູ່ພາຍໃນປະເທດເຄື່ອນໄຫວບໍ່ໄດ້ໂດຍສະເພາະແມ່ນ ສິນຄ້າທີ່ພາຍໃນປະເທດມີຄວາມສາມາດຜະລິດໄດ້ເຊັ່ນ: ຢາສູບ, ສະບູ, ຢາສີແຂ້ວ ແລະ ອື່ນໆ. ການຜະລິດພາຍໃນມີຄວາມຫຍຸ້ງຍາກ, ຊີວິດການເປັນຢູ່ຝືດເຄືອງ.

6/- ວຽກງານສຶກສາ, ສາທາລະນະສຸກ ແລະ ວັດທະນະທຳ, ຄຸນນະພາບຂອງການສຶກສາຍັງອ່ອນ, ການເອົາໃຈໃສ່ຕໍ່ຄູອາຈານກໍ່ຍັງບໍ່ເໝາະສົມ. ສະນັ້ນຈຶ່ງເກີດມີ ປະກົດການ ຄູສອນປະໜ້າທີ່ຂອງຕົນໄປເຮັດທຸລະກິດດ້ານອື່ນ. ການຂະຫຍາຍວຽກງານສຶກສາໝູ່ສ່ວນຫລາຍກໍ່ມີແຕ່ຕົວເມືອງ, ສ່ວນເຂດພູດອຍ, ເຂດຊົນເຜົ່າສ່ວນນ້ອຍຍັງຫລ້າຫລັງ, ການກືກໜັງສືໄດ້ກັບຄືນອີກ.

- ດ້ານຂະແໜງສາທາລະນະສຸກກໍ່ມີແຕ່ເຄື່ອນໄຫວຕາມຕົວເມືອງ, ສ່ວນຊົນນະບົດ, ເຂດພູດອຍເຈັບເປັນຍັງໃຊ້ຮູບການເຊື່ອຖືງົມງວາຍ, ການຖືຜີສາງລາງຮ້າຍຖືກຟື້ນຟູຄືນ.

- ດ້ານວັດທະນະທຳເບິ່ງທົ່ວໄປແລ້ວເຫັນວ່າ ມີຫລາຍປະກົດການຫຍໍ້ທໍ້ໃນສັງຄົມເປັນຕົ້ນແມ່ນຜົນສະທ້ອນຈາກຜະລິດຕະພັນດ້ານວັດທະນະທຳຂອງໄທ ແລະ ຕາເວັນຕົກ ໄດ້ຫລັ່ງໄຫລເຂົ້າມາລາວຢ່າງບໍ່ເລືອກເປົ້າໝາຍ. ຂະແໜງວັດທະນະທຳແຕ່ລະຂັ້ນພັດຂາດການຄຸ້ມຄອງ ແລະ ກວດກາ, ອີກ

ດ້ານໜຶ່ງພາກສ່ວນລັດວິສາຫະກິດທາງດ້ານວັດທະນະທຳ ຊ້ຳພັດສົ່ງເສີມບັນຫາດັ່ງກ່າວ, ອັນພາໃຫ້ສະຕິວັດທະນະທຳຂອງຊາດຖືກເສື່ອມເສຍ

7/- ການພົວພັນກັບຕ່າງປະເທດ, ພາຍຫລັງທີ່ໄດ້ ມີແຜນນະໂຍບາຍເປີດກວ້າງການພົວພັນກັບຕ່າງປະເທດ ພວກເຮົາພັດມີທ່າອ່ຽງທີ່ບໍ່ຖືກຕ້ອງຕາມແຜນນະໂຍບາຍຂອງພັກ, ມີແນວຄິດໜັກໄປສູ່ຕາເວັນຕົກຫລາຍກວ່າໂດຍສະເພາະ ແມ່ນກັບໄທ, ແຕ່ການພົວພັນນັ້ນຊ້ຳພັດບໍ່ເປັນເຈົ້າຕົນເອງ, ບໍ່ຮັບປະກັນວຽກງານປ້ອງກັນຊາດ - ປ້ອງກັນຄວາມ ສະຫງົບ, ເຫັນແຕ່ແງ່ດີ, ແລ່ນແຕ່ນຳຜົນປະໂຫຍດສະເພາະໜ້າ, ບໍ່ເຫັນຜົນປະໂຫຍດຍາວນານ, ເຫັນແຕ່ຜົນປະໂຫຍດ ບຸກຄົນ, ພາກສ່ວນ, ຫລົງລືມຜົນປະໂຫຍດສ່ວນລວມ; ແລ່ນນຳຜົນປະໂຫຍດດ້ານເສດຖະກິດອ້ອຍຕ້ອຍບໍ່ຄຳນຶງເຖິງດ້ານ ການເມືອງ. ສະນັ້ນຈຶ່ງເຮັດໃຫ້ພະນັກງານພວກເຮົາຈຳນວນໜຶ່ງໃນຂົງເຂດເສດຖະກິດເສຍທາດຂາດຄຸນ, ເສຍສະຕິ ຊາດ, ຂາດຫລັກໝັ້ນ, ຂາດນ້ຳໃຈຮັກຊາດ ແລະ ຂາດນ້ຳໃຈ ຮັບຜິດຊອບຕໍ່ໜ້າທີ່ການເມືອງຂອງຕົນ.

# ດຶງດູດແລະນຳໃຊ້ແຫຼ່ງທຶນຮອນຈາກຕ່າງ ປະເທດເຂົ້າໃນການຂະຫຍາຍການຜະລິດໃຫ້ ມີປະສິດທິຜົນ

ຄັດຈາກມະຕິ 7 ຂອງ ຄະນະບໍລິຫານງານສູນກາງພັກ ( ສະໄໝ ທີ່ IV ).

ຢາກຫລຸດພົ້ນອອກຈາກເສດຖະກິດວັດຖຸພັນ, ກຸ້ມຕົນເອງ ພໍໃຜພໍລາວ ຊຶ່ງເປັນສິ່ງກີດຂວາງປະເທດຊາດໃຫ້ຈົມຢູ່ ໃນຄວາມທຸກຍາກຫລ້າຫລັງ ໄດ້ມີແຕ່ທາງເສັ້ນດຽວຄື ເປີດກວ້າງການພົວພັນກັບຕ່າງປະເທດເອົາເສດຖະກິດຂອງປະເທດເຮົາຕິດພັນກັບເສດຖະກິດຂອງໂລກ. ແລະ ມີແຕ່ຜ່ານເສັ້ນທາງນີ້ ເທົ່ານັ້ນ ຈຶ່ງເຮັດໃຫ້ເສດຖະກິດສິນຄ້າຂະຫຍາຍຕົວຢ່າງ ໄວວາ ເຮັດໃຫ້ການພົວພັນສິນຄ້າ - ເງິນຕາໄດ້ຮັບການ ປະຕິບັດຢ່າງເຖິງຖອງ, ບົດຮຽນທີ່ຖອດຖອນໄດ້ຈາກປະເທດ ສັງຄົມນິຍົມ ແລະ ບັນດາປະເທດອຸດສາຫະກຳໃໝ່ຢູ່ອາຊີ ຍ້ອນເຂົາເຈົ້າເປີດກວ້າງການພົວພັນກັບຕ່າງປະເທດ, ພຽງ ແຕ່ ໄລຍະ 15 - 20 ປີ ຫລາຍປະເທດກໍ່ສຳເລັດການ ຫັນ ເປັນອຸດສາຫະກຳ ໃນປະເທດຂອງຕົນ.

1/. ພວກເຮົາປະຕິບັດນະໂຍບາຍເປີດກວ້າງການ ພົວພັນກັບຕ່າງປະເທດຕາມຫລັກການອັນໃດ ?

ຫລັກການດັ່ງກ່າວຄື: ຕ່າງຝ່າຍຕ່າງມີຜົນ ປະໂຫຍດ ແລະ ຮັບປະກັນເອກະລາດ ອະທິປະໄຕຂອງປະເທດ ແລະ ກົດໝາຍຂອງລັດເຮົາ.

-ຈຸດປະສົງຂອງພວກເຮົາແມ່ນແນໃສ່ຍາດແຍ່ງເອົາທຶນ, ເຕັກນິກ, ຜູ້ຊ່ຽວຊານ, ວິທີຄຸ້ມຄອງທີ່ກ້າວໜ້າ... ເພື່ອມາຂະຫຍາຍກຳລັງການຜະລິດ, ສ້າງທີມແຖວພະນັກງານຄຸ້ມຄອງ, ພະນັກງານທຸລະກິດ, ພະນັກງານ ແລະ ກຳມະກອນເຕັກນິກ, ຫັນເສດຖະກິດທຳມະຊາດໃຫ້ເປັນເສດຖະກິດທີ່ຜະລິດສິນຄ້າ ນັບທັງສິນຄ້າເອົາໄປແລກປ່ຽນໃນຕະຫລາດ ໂລກອີກດ້ວຍ, ສ້າງໂຄງປະກອບເສດຖະກິດກະສິກຳ - ປ່າໄມ້ ອຸດສາຫະກຳບໍລິການທີ່ສົມເຫດສົມຜົນຂຶ້ນເທື່ອລະກ້າວ.

- ໃນຂໍ້ກຳນົດວ່າດ້ວຍການປະຕິບັດກົດໝາຍລົງທຶນ ນັ້ນ ຄວນກຳນົດໃຫ້ຈະແຈ້ງວ່າໂຄງການໃດທີ່ຈະຮັບຮອງເອົາ ໄດ້ ແລະ ໂຄງການໃດທີ່ຈະບໍ່ຮັບຮອງເອົາໄດ້.

- ເພື່ອຮັບປະກັນຫລັກການຂອງນະໂຍບາຍເປີດ ກວ້າງການພົວພັນກັບຕ່າງປະເທດຂອງພວກເຮົານັ້ນຄວນຊຸຊາກຮວກັບດ້ານເສດຖະກິດ, ການເມືອງໃນການພົວພັນກັບຕ່າງ ປະເທດ, ຄວນສົມທຽບເບິ່ງການພົວພັນລະຫວ່າງ ທາ ແລະກຳລັງ ຂອງພວກເຮົາກັບຕ່າງປະເທດໃນເງື່ອນໄຂຕົວຈິງ.

2/. ພວກເຮົາປະຕິບັດນະໂຍບາຍເປີດກ້ວາງ ການພົວພັນກັບຕ່າງປະເທດໂດຍເນັ້ນໃສ່ໃຫ້ໄດ້ຫຍັງແດ່ ?

- <u>ຕ້ອງສົ່ງເສີມການລົງທຶນຂອງຕ່າງປະເທດໃນປະເທດເຮົາຢ່າງແຂງແຮງ ແລະ ເຂົ້າຮ່ວມໃນການແບ່ງງານ ສາກົນ.</u> ເພື່ອຂຸດຄົ້ນຊັບພະຍາກອນ ຂອງປະເທດເຮົາຢ່າງມີປະສິດທິຜົນ, ຫຍໍ້ເວລາແຫ່ງການຂະຫຍາຍຕົວຂອງກຳລັງ ການຜະລິດໃຫ້ສັ້ນເຂົ້າ, ບັນລຸຈັງຫວະຂະຫຍາຍຕົວໄວ, ຍົກລະດັບຊີວິດການເປັນຢູ່ທາງດ້ານວັດຖຸ ແລະ ວັດທະນະທຳ ຂອງປະຊາຊົນຂຶ້ນຢ່າງໄວວາ...

+ ການສົ່ງເສີມການລົງທຶນຂອງຕ່າງປະເທດໃນປະເທດເຮົານັ້ນ ພວກເຮົາມີຂໍ້ສະດວກຄື: ລະບອບການເມືອງ ໝັ້ນຄົງ, ຊັບພະຍາກອນທຳມະຊາດຂອງປະເທດເຮົາມີຫລາຍແຕ່ບໍ່ທັນໄດ້ຂຸດຄົ້ນ. ດ້ານຫຍຸ້ງຍາກມູນແມ່ນຄົມມະນາຄົມ, ຕິດຕໍ່ສື່ສານ ແລະ ພະລັງງານຍັງຫຍຸ້ງຍາກ, ກຳລັງແຮງງານທີ່ຊຳນານງານຍັງມີໜ້ອຍ, ການບໍລິການຍັງບໍ່ທັນ ຂະຫຍາຍຕົວ, ຕະຫລາດຈຳໜ່າຍບໍ່ກວ້າງ... ຄວາມຮູ້ກ່ຽວກັບການພົວພັນເສດຖະກິດກັບຕ່າງປະເທດຍັງໜ້ອຍເກີນໄປ. ພວກເຮົາຕ້ອງຮັບຮູ້ບັນຫານີ້ເພື່ອຈະມີນະໂຍບາຍທີ່ຈັບອົກ ຈັບໃຈ, ແກ້ໄຂອຸປະສັກຕ່າງໆ ເພື່ອເຮັດໃຫ້ຊາວຕ່າງປະເທດ ເຫັນວ່າ ການມາລົງທຶນໃນປະເທດເຮົານັ້ນໄດ້ຮັບ ຜົນປະໂຫຍດ

ຫລາຍກວ່າໄປລົງທຶນຢູ່ປະເທດອື່ນທີ່ນເງື່ອນໄຂຄ້າຍຄືປະເທດເຮົາ.

+ ພວກເຮົາຕ້ອງເລັ່ງລັດສ້າງກົດໝາຍແຫ່ງລັດເພື່ອໃຫ້ຊາວຕ່າງປະເທດມີຄວາມໝັ້ນໃຈໃນການມາລົງທຶນ. ຫລັງຈາກນັ້ນໃຫ້ຈັດຕັ້ງເຜີຍແຜ່ຢ່າງກວ້າງຂວາງໃນອົງການຕ່າງໆຢູ່ພາຍໃນປະເທດ ແລະ ຕ່າງປະເທດ ເປີດຊຸດອົບຮົມ ເມື່ອໃນໂອກາດສານເຫລົ່ານັ້ນ ໃຫ້ພະນັກງານຂັ້ນຕ່າງໆທີ່ກ່ຽວຂ້ອງເພື່ອເອົາເປັນພື້ນຖານໃຫ້ແກ່ການເຈລະຈາ, ພິຈາລະນາອະນຸມັດແຕ່ລະໂຄງການ.

+ ກະຊວງເສດຖະກິດ, ແຜນການ ແລະ ການເງິນເປັນຜູ້ສົມທົບກັບກະຊວງຕ່າງໆ ເພື່ອສ້າງ<u>ແຜນກຳນົດ ຍຸດທະສາດ</u>ພັດທະນາສຳລັບແຕ່ລະຂະແໜງການ, ແຕ່ລະບໍລິເວນ ໂດຍໄວ. ກຳນົດແຈ້ງ ສາລະບານບັນດາໂຄງການທີ່ຕ້ອງການໃຫ້ມີການລົງທຶນເພື່ອເປັນເຈົ້າການໃນການລະດົມທຶນ ແລະ ຮັບເອົາການລົງທຶນຈາກຕ່າງປະເທດ.

ໃນເງື່ອນໄຂທີ່ນັກແຖວພະນັກງານຂອງພວກເຮົາບໍ່ທັນມີບົດຮຽນກ່ຽວກັບວຽກງານນີ້, ພວກເຮົາຄວນໃຊ້ວິທີຂໍຜູ້ຊ່ຽວຊານຈາກປະເທດທີ່ຮູ້ຈັກປະເທດເຮົາດີ ແລະ ມີບົດຮຽນກ່ຽວກັບການສ້າງແຜນກຳນົດຍຸດທະສາດມາຊ່ວຍເຫລືອພວກ ເຮົາກະກຽມ. ຫລັງຈາກນັ້ນອາດຈະເຊີນບັນດານັກ ວິທະຍາສາດ ແລະ ຜູ້ທີ່ມີປະສົບການຫລາຍມາເຂົ້າຮ່ວມການສຳມະນາຢູ່ໃນ

ປະເທດເຮົາເພື່ອທາບທາມຄວາມຄິດຄວາມເຫັນນຳເຂົາເຈົ້າ ຕໍ່ຈານາກູ້ມຈົ່ງບູລະນະບູລະນະຍຸດທະສາດເສດຖະກິດຂອງພວກເຮົາໃຫ້ສົມບູນຂຶ້ນ.

+ ກະຊວງການຄ້າ ແລະ ພົວພັນເສດຖະກິດກັບຕ່າງປະເທດ ເປັນເຈົ້າພາບປະສານສົມທົບກັບກະຊວງ ເສດຖະກິດ, ແຜນການ ແລະ ການເງິນ ແລະ ກະຊວງອື່ນໆ ທີ່ກ່ຽວຂ້ອງ ຄົ້ນຄວ້າພິຈາລະນາຄຳຮ້ອງຂໍເຂົ້າມາລົງທຶນ, ເປັນຕົ້ນ ແມ່ນ ການລົງທຶນເຂົ້າໃນບັນດາໂຄງການດ້ານກະສິກຳ, ປູກຝັງ, ປຸງແຕ່ງ ຜະລິດຕະພັນກະສິກຳ, ລ້ຽງສັດ, ປຸງແຕ່ງໄມ້, ຫວາຍ. ໄມ້ປ່ອງ, ບັນດາໂຄງການທຸລະກິດປະສົມບໍລິການສອງສົ້ນໃຫ້ແກ່ກະສິກຳ - ປ່າໄມ້, ທະນາຄານທຸນສ່ວນກັບຕ່າງ ປະເທດ, ໂຄງການກໍ່ສ້າງໂຮງແຮມ ແລະ ການຂົນສົ່ງ... ຄຳຮ້ອງຂໍຕ່າງໆ ຄວນຈັດຕັ້ງພິຈາລະນາໃຫ້ລະອຽດ ແລະ ຕົກລົງພາຍໃນກຳນົດອັນແນ່ນອນ, ບໍ່ຄວນແກ່ຍາວເກີນໄປ.

-ກ່ຽວກັບການກູ້ຢືມ ແລະ ຊ່ວຍເຫລືອລ້າ

ປະເທດເຮົາຈຳນວນເງິນກູ້ຢືມ ແລະ ຊ່ວຍເຫລືອຈາກຕ່າງປະເທດຍັງກວມອັດຕາສ່ວນຫລາຍພໍສົມຄວນ ໃນລາຍຮັບງົບປະມານປະຈຳປີ. ດັ່ງນັ້ນ ຈະເຮັດແນວໃດຈຶ່ງຈະຊຸດຄົ້ນ ແລະ ນຳໃຊ້ແຫລ່ງເງິນຈຳນວນດັ່ງກ່າວຢ່າງມີປະສິດທິຜົນ, ທັງມີຄວາມສາມາດໃຊ້ແທນຫນີ້ສິນໄດ້.

+ ພວກເຮົາຕ້ອງຊອກຮູ້ ປະເທດໃດມີທ່າແຮງດ້ານ ໃດນັ້ນເໝາະກັບຈຸດພິເສດຂອງປະເທດເຮົາຈຶ່ງຈະຂໍການ ຊ່ວຍເຫລືອ ແລະ ກູ້ ຢືມ. ນັ້ນຈຶ່ງມີຄວາມສະດວກໃຫ້ແກ່ປະເທດທີ່ຈະໃຫ້ກູ້ຢືມທຶນ ແລະ ໃຫ້ການຊ່ວຍເຫລືອ ແກ່ພວກເຮົາ, ທາງພວກເຮົາກໍ່ຈະສາມາດນຳໃຊ້ສິ່ງຍອດຍິ່ງຂອງແຕ່ລະ ປະເທດໄດ້ຢ່າງສັງລວມ, ຈະສ້າງເງື່ອນໄຂໃຫ້ພວກເຮົາ ຂະຫຍາຍຕົວໄດ້ໄວ.

+ ແຫລ່ງທຶນຈາກການກູ້ຢືມ ແລະ ຊ່ວຍເຫລືອນັ້ນຕົ້ນ ຕໍແມ່ນໃຊ້ເຂົ້າໃນການສ້າງເສັ້ນທາງຄົມມະນາຄົມ, ຂົວ, ໂຄງການຊົນລະປະທານ, ໂຄງການພະລັງງານ, ສ້າງໂຮງຮຽນ ແລະ ສະຖາບັນຄົ້ນຄວ້າວິທະຍາສາດກ່ອນອື່ນໝົດແມ່ນຮັບໃຊ້ການຂະຫຍາຍກະສິກຳ - ປ່າໄມ້ ແລະ ການສ້າງ ຊົນນະບົດ. ໝົດທຸກໂຄງການລ້ວນແຕ່ຕ້ອງຄິດໄລ່ປະສິດທິຜົນ ເສດຖະກິດຢ່າງລະອຽດ, ຄິດໄລ່ຄວາມສາມາດເກັບກູ້ທຶນຄືນ ແລະ ຄວາມສາມາດໃຊ້ແທນໜີ້ສິນທີ່ກູ້ຢືມ. ທຶນຈຳນວນ ດັ່ງກ່າວຕ້ອງສຸມໃສ່ 6 ໂຄງການໃຫຍ່ທີ່ພັກໄດ້ວາງອອກ.

+ ທຸກແຫລ່ງທຶນຊ່ວຍເຫລືອ ແລະ ກູ້ຢືມຕ້ອງໄດ້ລວມສູນ ເຂົ້າ ງົບປະມານ, ສ່ວນການນຳໃຊ້ຕ້ອງມີເຈົ້າຂອງຢ່າງຈະແຈ້ງໝາຍວ່າຜູ້ເປັນເຈົ້າຂອງຕ້ອງໄດ້ຢືມຈາກ ທະນາຄານ ແລະ ມີຄວາມຮັບຜິດຊອບຊຳລະສະສາງໃຫ້ທະນາຄານ ຕາມ ກຳນົດເວລາເພື່ອຈະເອົາໄປໃຊ້ແທນໜີ້ສິນຄືນໃຫ້ ຕ່າງປະ

ເທດ. *brain power*

- <u>ກ່ຽວກັບສະຕິປັນຍາ ແລະ ບົດຮຽນ</u>

ແຫລ່ງ "ສະຕິປັນຍາ" ກໍ່ເປັນແຫລ່ງຊັບສົມບັດໜຶ່ງ ທີ່ມີຄວາມສຳຄັນທີ່ສຸດເພາະວ່າລະດັບການເຕີບໂຕຂອງເສດ ຖະກິດຈະໄວ ຫລື ຊ້າແມ່ນຂຶ້ນກັບສອງປັດໃຈຄື: ປັດໃຈ ວັດຖຸເຕັກນິກ ແລະ ປັດໃຈແຮງງານ. ດ້ວຍເຫດນັ້ນມີຫລາຍ ປະເທດ ເຂົາເຈົ້າໄດ້ເພີ່ມທະວີການ <u>ຈ້າງຜູ້ຊ່ຽວຊານ ຄຸ້ມຄອງ ແລະ ກຳມະກອນເຕັກນິກຈາກຕ່າງປະເທດ</u> ເພື່ອນຳໃຊ້ທຶນກູ້ຢືມໃຫ້ມີປະສິດທິຜົນກວ່າເກົ່າ.

ປະຈຸບັນພວກເຮົາພວມຕ້ອງການຜູ້ຊ່ຽວຊານດ້ານ ກົດໝາຍ, ດ້ານການພົວພັນເສດຖະກິດກັບຕ່າງປະເທດ, ການບັນຊີ, ທະນາຄານ, ຜູ້ຊ່ຽວຊານດ້ານຕະຫລາດ ຜູ້ຊ່ຽວຊານດ້ານຂຶ້ນໂຄງການ ແລະ ປະຕິບັດໂຄງການເປັນຕົ້ນແມ່ນໂຄງການໃຫຍ່ທີ່ກອງປະຊຸມຄັ້ງທີ IV ຂອງພັກວາງອອກ.

+ ເມື່ອເຊີນຊ່ຽວຊານເຂົ້າມາຕ້ອງມີຜູ້ເຮັດວຽກນຳໂດຍກົງ ແລະ ຜູ້ນັ້ນຕ້ອງລາຍງານຕໍ່ກົມນຳຂອງອົງການຂອງຕົນກ່ຽວກັບຕົນເອງຮຽນໄດ້ອັນໃດແດ່ຈາກຜູ້ຊ່ຽວຊານ ແລະ ໄດ້ຫມູນໃຊ້ເຂົາໃນວຽກງານທີ່ຕົນຮັບຜິດຊອບຄືແນວໃດ ?

+ ຕ້ອງປ່ຽນແປງໃຫມ່ນະໂຍບາຍຕໍ່ຜູ້ຊ່ຽວຊານດ້ານການບໍລິການເພື່ອນຳໃຊ້ສະຕິປັນຍາຄວາມຮູ້ຂອງຜູ້ຊ່ຽວຊານໃຫ້ໄດ້ດີ.

3/. ເພື່ອຮັບປະກັນໃຫ້ການປະຕິບັດນະໂຍບາຍ ເປີດກວ້າງການພົວພັນຕ່າງປະເທດໃຫ້ໄດ້ຮັບຜົນດີພວກເຮົາ ຕ້ອງເຮັດອັນໃດແດ່ ?

- ຕ້ອງສ້າງກຳລັງຂອງພວກເຮົາໃຫ້ເຂັ້ມແຂງ ຮອບດ້ານຄື:

+ ດ້ານການເມືອງ ຕ້ອງເຮັດໃຫ້ປະຊາຊົນຕິດພັນ ແລະ ເຊື່ອໝັ້ນຕໍ່ລະບອບໃໝ່.

+ ດ້ານເສດຖະກິດ ຕ້ອງຂະຫຍາຍການຜະລິດ ທຸລະກິດຢ່າງແຂງແຮງເຮັດໃຫ້ຊີວິດການເປັນຢູ່ຂອງປະຊາຊົນ ໄດ້ຮັບການປ່ຽນແປງໃຫ້ດີຂຶ້ນ.

+ ດ້ານສັງຄົມ ຕ້ອງມີຄວາມປອດໄພ.

+ ດ້ານວຽກງານປ້ອງກັນຊາດ - ປ້ອງກັນຄວາມ ສະຫງົບຕ້ອງຕິດແໜ້ນ ແລະ ຮັບໃຊ້ການພົວພັນເສດຖະກິດ ກັບຕ່າງປະເທດ.

- ການເປີດກວ້າງການພົວພັນເສດຖະກິດກັບຕ່າງ ປະເທດນັ້ນ ນອກຈາກຈະໄດ້ຮັບດ້ານດີແລ້ວ ພວກເຮົາຍັງຈະປະເຊີນໜ້າກັບສິ່ງທີ່ບໍ່ດີຕນອກ, ຍິ່ງໄປກວ່ານັ້ນຍັງຈະມີສິ່ງທີ່ຂັດກັບຮີດຄອງປະເພນີອັນດີງາມຂອງປະຊາຊົນເຮົາ. ນັ້ນແລ້ວຫວັງໃຫ້ພະນັກງານ, ສະມາຊິກພັກ ແລະ ປະຊາຊົນ ເຮົາຕ້ອງບຸກບືນຂຶ້ນໃນທຸກດ້ານ, ກ້າວຂຶ້ນເພື່ອຮັບເອົາ ແລະ ຄຸ້ມ

ຄອງບັນດາໂຄງການຮ່ວມມືກັບຕ່າງປະເທດໃຫ້ດີ, ຮັບເອົາບົດຮຽນຄຸ້ມຄອງ ແລະ ເຕັກໂນໂລຊີອັນກ້າວໜ້າຂອງ ຕ່າງປະເທດ, ປະຕິບັດຂໍ້ຜູກພັນກັບຕ່າງປະເທດໃຫ້ດີ. ຕ້ອງຍົກ ສູງສະຕິລະວັງຕົວຢູ່ສະເໝີ, ເຮັດວຽກງານປ້ອງກັນຊາດ ປ້ອງກັນຄວາມສະຫງົບໃຫ້ດີ, ເຝິກຝົນຫລໍ່ຫລອມຕົນເອງ ຮັກສາຄຸນສົມບັດຂອງພະນັກງານສະມາຊິກພັກໄວ້, ບໍ່ປະໃຫ້ຖືກຊື້ ຈ້າງດ້ວຍເງິນ, ຄຳ, ວັດຖຸ, ບໍ່ຕິດແປດແບບດຳລົງຊີວິດ ທີ່ບໍ່ຈົບງາມ, ເສື່ອມຊາມ.

- ຮີບຮ້ອນບຳລຸງສ້າງກຸ້ມແຖວພະນັກງານທີ່ ເຮັດວຽກງານພົວພັນ ເສດຖະກິດກັບຕ່າງປະເທດໃຫ້ເປັນຜູ້ທີ່ມີ ຄຸນສົມບັດ, ຈົງຮັກພັກດີຕໍ່ພາລະກິດຂອງພັກ ແລະ ຂອງຊາດ, ບໍ່ຖືກຊື້ຈ້າງຈອບອອຍດ້ວຍເງິນຄຳ ຊັບສິນ, ມີຄວາມສາມາດທາງດ້ານວິຊາການ, ວິຊາສະເພາະພໍສົມຄວນ, ຮູ້ຈັກຄົ້ນຄວ້າ ພິຈາລະນາຕີລາຄາການຮ້ອງຂໍລົງທຶນມັນເໝາະ ຫລື ບໍ່ເໝາະ, ຮູ້ກວດກາຊອກເຫັນເລຫລ່ຽມສໍ້ໂກງຂອງຜູ້ມາ ລົງທຶນ, ຮູ້ກົດໝາຍສາກົນທີ່ກ່ຽວຂ້ອງເຖິງການລົງທຶນຂອງຕ່າງປະເທດ.

- ຕ້ອງດັດແປງ ແລະ ຍົກສູງຄຸນນະພາບການ ບໍລິການໃຫ້ແກ່ນັກລົງທຶນຂອງຊາວຕ່າງປະເທດເຊັ່ນ: ເງື່ອນໄຂ ເຂົ້າອອກ ປະເທດ, ກິນຢູ່, ໄປມາ, ພັກຜ່ອນ, ປົວພະຍາດ... ສ້າງຄວາມເຊື່ອໝັ້ນ ແລະ ຄວາມປະທັບໃຈອັນດີຕໍ່ຊາວຕ່າງ

ປະເທດທີ່ເຂົ້າມາລົງທຶນຢູ່ປະເທດເຮົາ. ບັນຫາການເຂົ້າອອກ ແລະ ການໄປມາຂອງເຂົາເຈົ້າຢູ່ພາຍໃນປະເທດເຮົາ ເວົ້າລວມ ພວກເຮົາຕ້ອງໃຫ້ຄວາມສະດວກແກ່ເຂົາເຈົ້າ./.

# ສະພາບການປະຕິບັດນະໂຍບາຍເປີດປະຕູ ອອກສູ່ພາຍນອກ

ນັບແຕ່ຕຸມທີ່ພັກພວກເຮົາໄດ້ມີນະໂຍບາຍເປີດກວ້າງ ການພົວພັນກັບຕ່າງປະເທດ ແລະ ລັດພວກເຮົາໄດ້ວາງກົດໝາຍວ່າດ້ວຍການລົງທຶນຂອງຕ່າງປະເທດມາຮອດປະຈຸບັນ. ນະໂຍບາຍ ແລະ ກົດໝາຍດັ່ງກ່າວພວມໄດ້ຮັບການຈັດຕັ້ງປະຕິບັດຢ່າງຫ້າວຫັນ. ເສດຖະກິດຂອງປະເທດເຮົາໄດ້ຄ່ອຍໆ ເຂົ້າຕົວຕິດພັນກັບ ເສດຖະກິດໂລກ. ປະຈຸບັນ ຢູ່ໃນປະເທດເຮົາໄດ້ປະກົດມີວິສາຫະກິດຈຳນວນໜຶ່ງພວມດຳເນີນ ການທຸລະກິດປະສົມກັບຕ່າງປະເທດ ແລະ ກໍ່ມີຫລາຍປະເທດ ໄດ້ໃຫ້ຄວາມສົນໃຈຊອກຮູ້ ແລະ ຂໍມາລົງທຶນດຳເນີນທຸລະກິດ ຢູ່ໃນລາວເຮົາເຊັ່ນບໍລິສັດຢາສູບ, ທະນາຄານຮ່ວມ ພັດທະນາລາວ - ໄທ...

ເຊິ່ງຕາມການເກັບກຳທີ່ບໍ່ທັນຄົບຖ້ວນ ໄດ້ມີຮອດ 94 ໂຄງການແລ້ວໃນນັ້ນໂຄງການທີ່ສະເໜີທຶນມາແລ້ວມີ 62 ໂຄງການ.

ຜ່ານການປະຕິບັດນະໂຍບາຍການເປີດກວ້າງ ການ ພົວພັນຕ່າງປະເທດດັ່ງກ່າວພວກເຮົາໄດ້ຍາດແຍ່ງເອົາທຶນຮອນ, ເຕັກນິກ, ພູມຊອວຊານ ແລະ ວິທີຄຸ້ມຄອງທີ່ກ້າວໜ້າ ຂອງຕ່າງປະເທດ, ໄດ້ເຮັດໃຫ້ຈັງຫວະຄວາມໄວແຫ່ງການ ຂະຫຍາຍຕົວຂອງປະເທດເຮົາເພີ່ມຂຶ້ນ, ຂຸດຄົ້ນຊັບ ພະຍາກອນຂອງ ປະເທດເຮົາຢ່າງມີປະສິດທິຜົນ, ກຳລັງ ການຜະລິດຂອງ ປະເທດເຮົາກໍ່ໄດ້ຂະຫຍາຍຕົວໄວກວ່າເກົ່າ, ເສດຖະກິດຜະລິດສິນຄ້າກໍ່ໄດ້ຂະຫຍາຍຕົວ, ຊີວິດການເປັນຢູ່ ຂອງປະຊາຊົນໄດ້ຮັບການແກ້ໄຂ, ອັນນັ້ນໄດ້ສ້າງ ພື້ນຖານເບື້ອງຕົ້ນໃຫ້ແກ່ຄວາມເປັນເຈົ້າຕົນເອງທາງດ້ານເສດຖະກິດແຫ່ງຊາດຂອງພວກເຮົາ.

ແຕ່ພວກເຮົາຫວນມາເບິ່ງທາງດ້ານຫຍໍ້ທໍ້ຍັງມີ ຫລາຍບັນຫາທີ່ເປັນໜ້າຄິດ ເປັນຕົ້ນແມ່ນຕາມມາດຕາສອງຂອງກົດໝາຍວ່າດ້ວຍການມາລົງທຶນຂອງຕ່າງປະເທດທີ່ເລັ່ງ ໃສ່ສົ່ງເສີມ ແລະ ອຳນວຍຄວາມສະດວກເປັນພິເສດ ການລົງທຶນເຂົ້າໃນຂະແໜງການກະສິກຳ - ປ່າໄມ້, ອຸດສາຫະກຳທີ່ນຳໃຊ້ວັດຖຸດິບ ແລະ ຊັບພະຍາກອນທຳມະຊາດທີ່ມີຢູ່ ໃນລາວ ແລະ ນຳໃຊ້ເຕັກນິກທັນສະໄໝເພີ່ມຜະລິດພັນ ສິນຄ້າຂາອອກເປັນຕົ້ນຕໍຫລືທົດແທນສິນຄ້າຂາເຂົ້າ ແລະ ກໍ່ສ້າງພື້ນຖານໂຄງລ່າງທີ່ສຳຄັນ, ເຫັນວ່າການລົງທຶນຂອງຕ່າງປະເທດ

ມາຮອດປະຈຸບັນ ຍັງກະແຈກກະຈາຍບໍ່ທັນ ໄປຕາມທິດດັ່ງກ່າວເທື່ອ. ຍ້ອນວ່າການອະນຸຍາດລົງທຶນສ່ວນໃຫຍ່ແມ່ນຢູ່ໃນ ຂະແໜງການຄ້າຂາອອກ - ຂາເຂົ້າ 35,3% ອຸດສາຫະ ກຳປຸງແຕ່ງໄມ້ ແລະ ຫວາຍ 20%, ອຸດສະຫະກຳເບົາ ຕ່າງໆ 11,4%, ໂຮງງານຜະລິດເສື້ອຜ້າ 8,6% ແລະ ແມ່ນການລົງທຶນ ຂະໜາດນ້ອຍ " ສະເລ່ຍໂຄງການ ທີ່ ອະນຸຍາດ 1.200.000 ໂດລາ " ໃນນັ້ນ 91,4% ແມ່ນຕັ້ງຢູ່ ບໍລິເວນກຳແພງນະຄອນ ແລະ ອ້ອມຂ້າງສູນກາງ, 8,6%ແມ່ນຕັ້ງຢູ່ຕາງແຂວງ ແລະ ສ່ວນໃຫຍ່ພັດແມ່ນນາຍທຶນມາຈາກໄທ ຊຶ່ງກວມເອົາ 73,4% ພ້ອມຍັງມີຫລາຍໂຄງການພວມສຶກສາຢູ່, ຫລາຍໂຄງການທີ່ອະນຸມັດໄປແລ້ວກໍຍັງບໍ່ທັນໄດ້ເລີ່ມລົງມືປະຕິບັດ, ບາງໂຄງການຜູ້ຮ່ວມທຶນສອງຝ່າຍ " ລາວ-ໄທ" ບໍ່ຍອມປະຕິບັດຕາມສັນຍາທີ່ໄດ້ເຊັນກັນ.

ຈາກພຶດຕິກຳຕົວຈິງດັ່ງກ່າວນີ້ສະແດງໃຫ້ເຫັນວ່າ ພື້ນຖານໂຄງລ່າງເປັນຕົ້ນເສັ້ນທາງຄົມມະນາຄົມ, ການຕິດຕໍ່ສື່ສານພະລັງງານຫຍຸ້ງຍາກ, ກຳລັງແຮງງານທີ່ຊຳນານ ມີໜ້ອຍ, ຮາກຖານບໍລິການຍັງບໍ່ທັນຂະຫຍາຍຕົວ, ຕະຫລາດຈຳໜ່າຍບໍ່ກວ້າງຂວາງສະເພາະຢ່າງຍິ່ງແມ່ນຖັນແຖວພະນັກງານຂອງເຮົາທີ່ມີຄວາມຮູ້ເລິກເຊິ່ງກ່ຽວກັບການພົວພັນ ເສດຖະກິດກັບຕ່າງປະເທດຍັງໜ້ອຍເກີນໄປ. ການພົວພັນ ກັບ

ຕ່າງປະເທດແມ່ນຄວາມຈຳເປັນຊຶ່ງບໍ່ວ່າປະເທດໃດກໍລ້ວນແຕ່ຕ້ອງໄດ້ດຳເນີນໃນທຳນອງດຽວກັນແຕ່ພວກເຮົາກໍ່ຕ້ອງ ເຂົ້າໃຈວ່າການເປີດປະຕູນັ້ນຈະມີອັນໄດ້ ແລະ ອັນເສັຍ, ມີຜູ້ຮ້າຍແລະ ຜູ້ດີເຂົ້າມາໂດຍສະເພາະແມ່ນບັນດາປະເທດທຶນນິຍົມ, ເພາະຈັກກະພັດທຶນນິຍົມຍາມໃດມັນກໍ່ຍັງບໍ່ທັນປະລະ ທາດແທ້ຂອງມັນທີ່ວ່າ: " ກຳໄລ ຫລື ກິນກິນ " ພວກເຂົາ ພະຍາຍາມໃຊ້ທຸກວິທີທາງຈຳກັດຂັດຂວາງການຂະຫຍາຍຕົວ ຂອງລາວເຮົາ ຈາກການພົວພັນເສດຖະກິດກັບໄທ, ໂດຍ ສະເພາະແມ່ນຊັບພະຍາກອນປ່າໄມ້ຖືກຂຸດຄົ້ນຢ່າງຊະຊາຍ, ການລົງທຶນຂອງໄທເປັນແບບ " ເສືອຫວງຊາກ " ເຂົ້າຈະເຂົ້າ - ມາລົງທຶນແທ້ພັດບໍ່ເຮັດແຕ່ເມື່ອປະເທດອື່ນຈະມາລົງທຶນ ພັດຊອກຫາທຸກວິທີໂຄສະນາຂັດຂວາງ. ທາງດ້ານສິນຄ້າ, ໄທໄດ້ນຳເອົາເຄື່ອງສຳເລັດຮູບເຂົ້າມາໂດຍບໍ່ຈຳແນກປະເພດແລະຊະນິດເຮັດໃຫ້ການຜະລິດ ແລະ ການຄ້າພາຍໃນຖືກຢຸດ ສະງັກ, ລາຄາເງິນກີບທະນາຄານຖືກຕົກຕ່ຳ, ລາຄາຢູ່ທ້ອງຕະຫລາດບໍ່ປົກກະຕິ, ຊີວິດການເປັນຢູ່ຂອງປະຊາຊົນ ແລະ ພະນັກງານລັດຖະກອນມີຄວາມຝືດເຄືອງ . ພ້ອມນັ້ນເຂົາ ເຈົ້າຍັງໄດ້ນຳເອົາຜະລິດພັນທາງດ້ານວັດທະນະທຳ - ສັງຄົມເຖື່ອນ ແລະ ພວກນັກສືບສອດແນມເຂົ້າມາກໍ່ຄວາມ ສັບສົນຫຍຸ້ງຍາກໃຫ້ພວກເຮົາເປັນຕົ້ນແມ່ນພະນັກງານຈຳນວນ ໜຶ່ງຖືກຊັກຈູງຈອບຍອຍ, ກິນສິນບົນ, ເກີດມີແນວຄິດ ສັນຕິພາບ

ສະຫງົບສຸກ, ລະເມີດເພີ້ນໃຫ້ໄທມາສ້າງເສດຖະກິດ ໃນ
ລາວ. ຖືເບົາວຽກງານປ້ອງກັນຊາດປ້ອງກັນຄວາມ ສະຫງົບ
ສຸກ, ປິ່ນເປລ່ຽນທາງຍຸດທະສາດກັບຍຸດໂທບາຍ, ເນັ້ນ
ໜັກແຕ່ຄຳເວົ້າບ້ານພີ່ເມືອງນ້ອງ, ບ້ານໃກ້ເຮືອນຄຽງ
ຫລູ້ນກິນຟູມເຟືອຍ, ພະນັກງານບາງຄົນເກີດມີແນວຄິດ ສວຍ
ໃຊ້ຖານະຕຳແໜ່ງເອົາຂອງສ່ວນລວມເປັນຂອງສ່ວນຕົວຊອກ
ລາຍໄດ້ທີ່ຜິດກົດໝາຍ ແລະ ອື່ນໆ... ສວຍໃຊ້ນະໂຍບາຍ
ຄ້າຂາຍເສລີຖືກກົດໝາຍເພື່ອຄ້າຂາຍເຖື່ອນ, ລັກພາສີ, ໜີ
ພາສີ... ຊະກົດການດັ່ງກ່າວນັ້ນແມ່ນພວມຕົກຢູ່ໃນແຜນຍຸດທະ
ສາດຂອງເຂົາທີ່ວ່າ: ຫັນສະໜາມຮົບມາເປັນສະໜາມການ
ຄ້າ.

ເພື່ອເຮັດໃຫ້ນະໂຍບາຍເປີດກວ້າງການພົວພັນກັບ ຕ່າງ
ປະເທດມີປະສິດທິຜົນ, ເປັນຕົ້ນແມ່ນພົວພັນກັບໄທ, ພວກເຮົາ
ຕ້ອງຢືນຢັນຫລັກໝັ້ນທີ່ເປັນຫລັກການສະເໝີພາບຕ່າງ ຝ່າຍ
ຕ່າງມີຜົນ, ເຄົາລົບຄວາມເປັນເອກະລາດອຳນາດອະທິ ປະ
ໄຕ ແລະ ພື້ນແຜ່ນດິນອັນຄົບຖ້ວນ ຂອງ ປະເທດເຮົາ, ຕ້ອງ
ຈຳແນກ ແລະ ຮັບຮູ້ຢ່າງເລິກເຊິ່ງວ່າໄທຢາກໄດ້ຫຍັງ ນຳ
ເຮົາ ? ດ້ານເສດຖະກິດ, ຄວາມປອດໄພ, ດ້ານການ ເມືອງ
ແລະ ສັງຄົມ, ແລະ ພວກເຮົາຕ້ອງການຫຍັງນຳໄທຕ້ອງ ສົມ
ທຽບຊັ່ງຊາລະຫວ່າງອັນໄດ້ ແລະ ເສຍ ຢ່າງລະອຽດລະອໍ.

ລວມຄວາມແລ້ວການເປີດປະຕູອອກສູ່ພາຍນອກຂອງເຮັດ

ໄປຢ່າງໜັກແໜ້ນ, ບໍ່ຮ້ອນຮົນຟ້າວຟັ່ງ, ແຕ່ກໍບໍ່ປະກາລະ ໂອກາດ, ທັງຮັບປະກັນການລົງທຶນຂອງຕ່າງປະເທດ, ທັງປັບ ປຸງກໍ່ສ້າງກຳລັງຂອງຕົນເອງ ໄປເປັນກ້າວໆ. ຕ້ອງປຸກ ລະ ດົມມະຫາຊົນສ້າງຮາກຖານການເມືອງໃຫ້ໜັກແໜ້ນ ເຂັ້ມ ແຂງຮອບດ້ານ. ສ້າງເສດຖະກິດໃຫ້ມີການຂະຫຍາຍຕົວເຮັດ ໃຫ້ຊີວິດການເປັນຢູ່ຂອງປະຊາຊົນນັບມື້ນັບໄດ້ຮັບການປົວແປງ ດີຂຶ້ນ, ດ້ານສັງຄົມຕ້ອງເຮັດໃຫ້ມີຄວາມປອດໃສ. ວຽກງານ ປ້ອງກັນຊາດ - ປ້ອງກັນຄວາມສະຫງົບສຸກ ຕ້ອງຕິດ ແໜ້ນ ແລະ ຮັບໃຊ້ການພົວພັນເສດຖະກິດກັບຕ່າງປະເທດ; ຮັບປະ ກັນໃຫ້ກາຍເປັນກຳລັງແຮງສັງລວມເພື່ອສ້າງສາປະເທດເຮົາ ໃຫ້ນັບມື້ນັບສີວິໄລ ແລະ ກ້າວໜ້າ.

# ທິດທາງຍຸດທະສາດແລະແນວຄິດຊີ້ນຳກ່ຽວກັບ
# ວຽກງານປ່າໄມ້ຂອງປະເທດເຮົາ

ປ່າໄມ້ແມ່ນຊັບພະຍາກອນອັນລ້ຳຄ່າເຊິ່ງທຳມະຊາດ ໄດ້ສ້າງໄວ້ໃຫ້ປະຊາຊົນເຮົາ, ທັງແມ່ນມູນມໍລະດົກອັນປະເສີດທີ່ພວກເຮົາໄດ້ສືບທອດມາຈາກປູ່ຍ່າຕາຍາຍຂອງພວກເຮົາ.

ດັ່ງນັ້ນ ທຸກຄົນພວກເຮົາຕ້ອງພ້ອມກັນປົກປັກຮັກສາ, ຟື້ນຟູບູລະນະ ແລະ ຂະຫຍາຍປ່າໄມ້ເພື່ອສົມເປັນຜູ້ສືບທອດ ມູນເຊື້ອຮັກຊາດຂອງປູ່ຍ່າຕາຍາຍ ແລະ ສົມເປັນບັນພະບຸລຸດຂອງຄົນຮຸ່ນຕໍ່ໄປ. ພັກ ແລະ ລັດເຮົາຍາມໃດກໍ່ໄດ້ເອົາເຖິງຄວາມສຳຄັນຂອງປ່າໄມ້ ອັນພົວພັນຢ່າງສະໜິດແໜ້ນ ກັບຄວາມເປັນຕາຍ ແລະ ການຂະຫຍາຍຕົວຂອງປະເທດເຮົາ. ແນວທາງຂະຫຍາຍເສດຖະກິດແຫ່ງຊາດຂອງພັກລັດກໍໄດ້ ຖືເອົາການກະສິກຳ - ປ່າໄມ້ ເປັນພື້ນຖານເພື່ອຂະຫຍາຍອຸດສາຫະກຳ ມະຕິຂອງປະຊຸມໃຫຍ່ຄັ້ງທີ່ IV ຂອງພັກໄດ້ວາງໂຄງການ " ຈຳກັດ ແລະ ໄປເຖິງບອນຢຸດຕິການຖາງ ປ່າເຮັດໄຮ່, ປົກປັກຮັກສາສິ່ງແວດລ້ອມ " ເປັນໜຶ່ງ ໃນໂຄງການທີ່ມີຈຸດໝາຍສຳຄັນໃນການພັດທະນາເສດຖະກິດ ສັງຄົມຂອງຊາດ.

ກອງປະຊຸມປ່າໄມ້ທົ່ວປະເທດຄັ້ງປະຫວັດສາດເມື່ອ ວັນທີ່ 22 - 28 ເດືອນ 5 ປີ 1989 ໄດ້ວາງບັນດາຍຸດທະສາດຂອງວຽກງານປົກປັກຮັກສາຟື້ນຟູບູລະນະ, ປູກ ຂະຫຍາຍ ປ່າ ແລະ ນຳໃຊ້ຊັບພະຍາກອນປ່າໄມ້ໃນສະເພາະໜ້າ ແລະ ຍາວນານ.

1./ ຖ້າປ່າໄມ້ບໍ່ໄດ້ຮັບການປົກປັກຮັກສາ, ຟື້ນຟູ ບູລະນະຂະຫຍາຍ, ປະເທດຊາດຈະມີຜົນເສຍຫາຍຄືແນວໃດ ?

- ແນວຄິດຂອງຄົນເຮົາທົ່ວໄປຖືວ່າລາວເຮົາແມ່ນ ມີຊັບພະຍາກອນປ່າໄມ້ອຸດົມຮັ່ງມີ, ບໍ່ເຫືອດແຫ້ງເປັນຈັກເທື່ອ, ດັ່ງນັ້ນການນຳໃຊ້ຈຶ່ງ ຟູມເຟືອຍ, ບໍ່ຄຳນຶງເຖິງດ້ານ ຜົນຮ້າຍຕາມມາ, ປະຈຸບັນລາຍຮັບງົບປະມານຂອງບາງແຂວງແມ່ນອີງໃສ່ແຕ່ໄມ້ດ້ານດຽວເພື່ອຮັບໃຊ້ລາຍຈ່າຍໃຫ້ທຸກການເຄື່ອນໄຫວເສດຖະກິດ. ກົງກັນຂ້າມພັດບໍ່ຄຳນຶງເຖິງການປູກໄມ້ຂະຫຍາຍປ່າຄືນ. ເຮັດແນວນັ້ນແມ່ນການທຳລາຍປ່າໄມ້ໃຫ້ໝົດມື້ໝົດໄປ. ອີກດ້ານໜຶ່ງປະຊາຊົນເຮົາກວ່າ 2 ແສນຫ້າໝື່ນຄອບຄົວ ຫຼື ເກືອບ ໜຶ່ງລ້ານຫ້າແສນຄົນດຳລົງຊີວິດ ດ້ວຍການເຮັດໄຮ່ໃນເນື້ອທີ່ປະມານ 3 ແສນ ເຮັກຕາແຕ່ລະປີ. ນອກນັ້ນຍັງມີການຈູດປ່າ ລ່າສັດປ່າຊະຊາຍ...

- ການຂາຍໄມ້ອອກຕ່າງປະເທດ ຜ່ານມາແມ່ນ ຖືກ ພໍ່ຄ້າມືກາງຕົ້ມຕົວະ ຕົວຢ່າງຂາຍໄມ້ອອກຕ່າງປະເທດ ປີ 1988. ໃນຕົວຈິງຕ້ອງໄດ້ເງິນຢ່າງໜ້ອຍ 60 ລ້ານໂດລາ

ແຕ່ຕົວຈິງໄດ້ເງິນ ຈົດເຂົ້າບັນຊີພຽງແຕ່ 45 ລ້ານໂດລາໃນນັ້ນລັດໄດ້ນຳແຕ່ 1,9% ເທົ່ານັ້ນ. ອັນນັ້ນແມ່ນບໍ່ ເອົາໄມ້ເປັນສິນຄ້າຂາອອກເພື່ອເປັນລາຍຮັບໃຫ້ແກ່ງົບປະມານ ;

– ພາຍຫລັງນະໂຍບາຍເປີດກວ້າງ, ຊຸກຍູ້ການ ຜະລິດທຸລະກິດຂອງຫລາຍພາກສ່ວນເສດຖະກິດ, ໃນສອງ ສາມ ປີຜ່ານມານີ້, ໂຮງເລື່ອຍ, ໂຮງຊອຍໄມ້ ເກີດຂຶ້ນຢ່າງອຶກກະທຶກຄຶກໂຄມ ຕົວຢ່າງ ກຳແພງນະຄອນວຽງຈັນມີໂຮງເລື່ອຍ, ໂຮງຊອຍ, ໂຮງປຸງແຕ່ງໄມ້ໃຫຍ່ນ້ອຍທັງໝົດ 322 ແຫ່ງ; ສະຫວັນນະເຂດ 50 ແຫ່ງ ແລະ ແຂວງອື່ນໆອີກ...ການຂະຫຍາຍໂຮງເລື່ອຍ, ໂຮງຊອຍຄືແນວນັ້ນເປັນການຊຸກຍູ້ ໃຫ້ມີການຕັດໄມ້ທຳລາຍປ່າໄປໃນຕົວ, ຄວາມສາມາດ ທຳລາຍປ່າໄມ້ແບບນີ້ ແມ່ນຄວາມຕ້ອງການຂອງໂຮງເລື່ອຍສູງ ກວ່າຄວາມສາມາດຂຸດຄົ້ນແຫລ່ງໄມ້ຢ່າງບໍ່ສົມສ່ວນ...

ຖ້າປ່ອຍປະໃຫ້ສະພາບການທຳລາຍປ່າໄມ້ທີ່ມີຜົນ ເສັຍຫາຍຮ້າຍແຮງນັ້ນຈະພາໃຫ້ເກີດບັນຫາຢ່າງຫລີກລ້ຽງບໍ່ໄດ້. ແຕ່ລະປີປ່າໄມ້ຈະຫລຸດລົງ 350 ພັນເຮັກຕາ, ບໍລິມາດໄມ້ໝົດໄປ 76 ລ້ານແມັດກ້ອນ. ຖ້າປ່ອຍໃຫ້ປ່າໄມ້ຖືກ ທຳລາຍໃນລະດັບປະຈຸບັນ, 15 ປີ ຕໍ່ໜ້າປ່າໄມ້ລາວແມ່ນຈະບໍ່ມີ. ຕົວຢ່າງແຂວງຫລວງພະບາງປະຈຸບັນຍັງມີປ່າໄມ້ປົກຫຸ້ມພຽງແຕ່ 10%, ຕາມອັດຕາຂີດອັນຕະລາຍຂອງການປົກຫຸ້ມຕ່ຳຮອດ 30% ແມ່ນນອນຢູ່ໃນຂີດອັນຕະລາຍແລ້ວ ຫລືເອີ້ນ



ບໍ່ມີໄມ້ ດິນເຈື່ອນ ດິນເພ

ວ່າສັນຍານໄຟແດງແລ້ວ. ສິ່ງແວດລ້ອມຂອງທຳມະຊາດ ຖືກທຳລາຍ, ຊີວິດຂອງຄົນເຮົາ ຫລື ສັດ ກໍ່ຖືກທຳລາຍເພາະຊີວິດມະນຸດເຮົານັ້ນພົວພັນໂດຍກົງກັບປ່າໄມ້. ໝາຍວ່າ ມີປ່າໄມ້ຈຶ່ງມີຄົນ, ມີນ້ຳ ຕອບສະໜອງໃຫ້ການຜະລິດສະບຽງອາຫານແກ່ຄວາມຕ້ອງການຂອງຄົນເຮົາ. ການພົວພັນສິ່ງ ແວດລ້ອມຂອງຜູ້ເຮັດໄຮ່ ແລະ ເຮັດນາ. ເຮັດໄຮ່ຈະເຮັດໃຫ້ນ້ຳແຫ້ງລົງ, ຜູ້ເຮັດນາບໍ່ພໍນ້ຳ, ບໍ່ມີນ້ຳ; ເປັນແນວນັ້ນ ຜູ້ເຮັດນາຈຳຕ້ອງໄປເຮັດໄຮ່, ທັງຜູ້ເຮັດນາພັດໄປເຮັດໄຮ່ແຮງຈະເຮັດໃຫ້ປ່າໄມ້ໝົດ, ນ້ຳບໍ່ມີ ແລະຊີວິດຂອງຄົນເຮົາ ກໍ່ຈະພົບກັບຄວາມແຫ້ງແລ້ງໄປຕາມໆກັນ. ປະຊາຊົນແຂວງຫົວພັນຈຶ່ງມີຄຳກອນຂັ້ນມາວ່າ: 3 ບໍ່ " ບໍ່ມີນ້ຳເຮັດນາບໍ່ມີປ່າເຮັດໄຮ່ບໍ່ມີໄມ້ເຮັດເຮືອນ " ຕໍ່ຈາກນັ້ນປະຊາຊົນກໍ່ຈະຫລົບໄພດ້ວຍ



ຫ້ວຍນ້ຳບົກແຫ້ງ ຍ້ອນບໍ່ມີປ່າໄມ້

ການພັດຖິ່ນ ໄປສູ່ການເລີ່ມຕົ້ນສ້າງຊີວິດບ່ອນໃໝ່ ຕໍ່ໆໄປ ເລື້ອຍໆ.

2/. ບັນດາແຜນຍຸດທະສາດ, ມາດຕະການປົກປັກຮັກສາ ຟື້ນຟູ ບູລະນະ, ປູກຂະຫຍາຍປ່າ ມີຫຍັງແດ່ ?

ເພື່ອຈະຈຳກັດ ແລະ ກ້າວໄປເຖິງບ່ອນຢຸດຕິການ ຖາງປ່າເຮັດໄຮ່, ການຈູດປ່າ ແລະ ຕັດໄມ້ຢ່າງຊະຊາຍ, ຫັນໄປສູ່ການປົກປັກຮັກສາ, ຟື້ນຟູ ບູລະນະ, ປູກຂະຫຍາຍປ່າ ແລະ ນຳໃຊ້ຊັບພະຍາກອນປ່າໄມ້ຢ່າງສົມເຫດສົມຜົນ, ມະຕິ ກອງປະຊຸມປ່າໄມ້ທົ່ວປະເທດຄັ້ງທີ່ I ໄດ້ກຳນົດ 4 ແຜນຍຸດທະສາດກ່ຽວກັບວຽກງານປ່າໄມ້ທີ່ມີການພົວພັນກັບ ໂຄງການຜະລິດສະບຽງອາຫານ ແລະ ໂຄງການຜະລິດສິນຄ້າ ມີດັ່ງນີ້:

<u>ແຜນຍຸດທະສາດທີ່ໜຶ່ງ:</u> ແມ່ນວຽກງານຈັດສັນ ອາຊີບຄົງທີ່ໃຫ້ແກ່ປະຊາຊົນ ບັນດາເຜົ່າຈຳນວນປະມານ 250 ພັນຄອບຄົວ ທີ່ຍັງດຳລົງຊີວິດດ້ວຍການຖາງປ່າເຮັດໄຮ່ ເຄື່ອນທີ່ໄປສູ່ອາຊີບຄົງທີ່. ໃນແຕ່ລະປີ ປະຊາຊົນຈຳນວນດັ່ງກ່າວຈຳຕ້ອງໄດ້ຖາງປ່າ 3 ແສນກວ່າເຮັກຕາ ເພື່ອຜະລິດເຂົ້າໄດ້ພຽງ 4 ແສນໂຕນ. ອາຊີບເຮັດໄຮ່ເປັນການທຳລາຍ ປ່າ ແລະ ສິ່ງແວດລ້ອມຢ່າງໜັກໜ່ວງ. ຈຳເປັນຕ້ອງໄດ້ຈັດສັນອາຊີບໃຫ້ເຂົາເຈົ້າຢ່າງຮີບດ່ວນ.

- ພວກເຮົາຕ້ອງມີມາດຕະການອັນສັກສິດເພື່ອ ຊ່ວຍເຫຼືອປະຊາຊົນບັນດາເຜົ່າທີ່ຍັງທຳມາຫາກິນແບບເຄື່ອນທີ່ໃນການບຸກເບີກເນື້ອທີ່ປູກຝັງຄົງທີ່ຢ່າງເໝາະສົມເຊັ່ນ: ສ້າງ

ນາ, ສ້າງຊົນລະປະທານ, ອ່າງເກັບນ້ຳ, ສ້າງໄຮ່ຄົງທີ່, ໄຮ່ຂັ້ນໄດ, ເຮັດກະເສດສຸມບ່ອນທີ່ມີເງື່ອນໄຂເຮັດຊົນລະປະທານ... ຈັດຕັ້ງປະຕິບັດນະໂຍບາຍມອບດິນ, ມອບປ່າໃຫ້ປະຊາຊົນນຳໃຊ້ເຂົ້າໃນການຜະລິດສະບຽງອາຫານ, ຜະລິດສິນຄ້າ ແລະ ປົກປັກຮັກສາປ່າໄມ້, ປູກຂະຫຍາຍປ່າ... ປະຊາຊົນເຜົ່າຕ່າງໆ ທີ່ເປັນເປົ້າໝາຍຂອງການຈັດສັນ ອາຊີບຄົງທີ່ຕ້ອງມີໜ້າທີ່ປະກອບສ່ວນເຂົ້າໃນການຄຸ້ມຄອງ, ປົກປັກຮັກສາ ແລະ ຂະຫຍາຍຊັບພະຍາກອນປ່າໄມ້ ໃຫ້ນັບມື້ ອຸດົມຮັ່ງມີຂຶ້ນເລື້ອຍໆ.

- ເພື່ອບັນລຸຈຸດໝາຍຂ້າງເທິງ ລັດຕ້ອງລົງທຶນ ດ້ານການເງິນ, ພະນັກງານ, ເຄື່ອງມືການຜະລິດ ແລະສະບຽງອາຫານໃນເບື້ອງຕົ້ນ, ຕົ້ນຕໍແມ່ນສ້າງຊົນລະປະທານ, ອ່າງເກັບນ້ຳ, ບຸກເບີກເນື້ອທີ່ບ່ອນທີ່ບໍ່ມີປ່າໄມ້, ສ້າງຖະໜົນຫົນທາງ ແລະ ປູກໄມ້ໃຫ້ເປັນປ່າຄືນ.

<u>ແຜນຍຸດທະສາດທີ່</u> II: ແມ່ນວຽກງານປົກປັກຮັກສາ, ຟື້ນຟູ ແລະ ປູກຂະຫຍາຍປ່າໄມ້:

- ພວກເຮົາມີຄວາມຈຳເປັນພາວະວິໄສທີ່ສຸດໃນການປົກປັກຮັກສາ, ຟື້ນຟູ ບູລະນະປ່າທີ່ມີຢູ່ໃນປະຈຸບັນ, ເນື້ອທີ່ ປ່າໄມ້ທີ່ຍັງມີປະຈຸບັນ ໃຫ້ໄດ້ຢ່າງເດັດຂາດ ແລະ ປູກຂະຫຍາຍເພີ່ມເຕີມເພື່ອຍົກລະດັບການປົກຫຸ້ມຂອງປ່າໄມ້ແຕ່ 45% ຂຶ້ນເປັນ 70% ໃນອະນາຄົດ ( ຫລັງຈາກເນື້ອທີ່ປ່າໄມ້ທີ່ມີໃນປະ



ປ່າໄມ້ທີ່ໄດ້ຮັບການປູກຄືນ

ຈຸບັນ 10 ລ້ານເຮັກຕາຂຶ້ນເປັນ 17 ລ້ານເຮັກຕາ ໃນອະນາຄົດ )

- ມາດຕະການອັນຮີບດ່ວນສະເພາະໜ້າແມ່ນຕ້ອງ ຮີບຮ້ອນດຳເນີນການສຳຫລວດຊັບພະຍາກອນປ່າໄມ້ ທົ່ວປະເທດໃຫ້ສຳເລັດໂດຍໄວ ເພື່ອມີແຜນຈັດສັນເປັນເຂດ, ເປັນ ແຕ່ລະປະເພດປ່າ ເຊັ່ນ: ປ່າປ້ອງກັນບໍ່ເກີດແຫລ່ງນ້ຳ, ປ່າສະຫງວນພືດພັນສັດປ່າທີ່ມີຄຸນຄ່າ ແລະ ຫາຍາກ, ປ່າທຸລະກິດໄມ້ ແລະ ເຄື່ອງປ່າຂອງດົງ...

- ໃນປະຈຸບັນນີ້ຕ້ອງຕັດສິນໃຈຢຸດຕິການຕັດໄມ້ ແລະຈູດປ່າຢ່າງສິ້ນເຊີງ, ປົກປັກຮັກສາເນື້ອທີ່ປ່າໄມ້ທີ່ມີຢູ່ບໍ່ໃຫ້ຖືກທຳລາຍໄດ້, ດຳເນີນການຟື້ນຟູປ່າຕາມທຳມະຊາດປະມານ 5 ລ້ານເຮັກຕາ, ມອບດິນທີ່ດິນປ່າໄມ້ໃຫ້ບັນດາວິສາຫະກິດ ປ່າໄມ້, ສະຫະກອນ, ກຸ່ມເສດຖະກິດ - ສັງຄົມ, ບ້ານ, ຄອບຄົວ ແລະ ຫົວໜ່ວຍການຜະລິດອື່ນໆ ທີ່ຕ້ອງການວັດຖຸດິບໄມ້ປູກເອົາເອງ.

<u>ແຜນຍຸດທະສາດທີ່</u> <u>III</u> ແມ່ນວຽກງານນຳໃຊ້ ຍູປະໂຫຍດຂອງຊັບພະຍາກອນປ່າໄມ້ ແລະ ອຸດສາຫະກຳໄມ້:

ຊັບພະຍາກອນປ່າໄມ້ແມ່ນພາກສ່ວນໜຶ່ງຂອງ ຊັບພະຍາກອນທຳມະຊາດ; ປະກອບດ້ວຍຕົ້ນໄມ້ ໃຫຍ່, ນ້ອຍ, ພືດກ້ອງຮົ່ມໄມ້, ຈຳພວກເຄືອຫຍ້າ, ສັດປ່າໃຫຍ່, ນ້ອຍທຸກ ຊະນິດ. ສ່ວນປະກອບເຫຼົ່ານີ້ມີການພົວພັນຊ່ວຍຊູ່ຢູ່ໜູນກັນເພື່ອການຄົງຕົວ ແລະ ຂະຫຍາຍຕົວ. ໃນສະພາບແວດລ້ອມ ທຳມະຊາດອັນປະກອບດ້ວຍດິນ, ນ້ຳ ແລະ ອາກາດ ຫຼື ເອີ້ນວ່າບໍລິເວນປ່າໄມ້.

- ການຂະຫຍາຍອຸດສາຫະກຳໃນຕໍ່ໜ້າພວກເຮົາ ຕ້ອງເນັ້ນໜັກການດຸ່ນດ່ຽງລະຫວ່າງຂອດກໍ່ສ້າງວັດຖຸດິບກັບຄວາມຕ້ອງການວັດຖຸດິບ. ບັນດາໂຮງງານປຸງແຕ່ງໄມ້ຈະຕ້ອງ ມີເຂດດິນປ່າໄມ້ເປັນຂອງຕົນເອງເພື່ອໃຊ້ເຂົ້າໃນການປູກ, ບົວ

ລະບັດ ແລະ ປົກປັກຮັກສາຈົນກາຍເປັນວັດຖຸດິບປ້ອນ ໂຮງງານຂອງຕົນ. ຕ້ອງຈຳກັດການຕັດໄມ້ຈາກປ່າ ທຳມະ ຊາດມາປ້ອນໂຮງງານ.

- ທິດທາງແມ່ນຈະຫັນໄປນຳໃຊ້ເຕັກນິກ ແລະ ເຕັກໂນໂລຊີ ປຸງແຕ່ງໄມ້ ລະດັບສູງເພື່ອນຳໃຊ້ໃຫ້ໝົດຄຸນປະໂຫຍດຂອງໄມ້ທີ່ຕັດລົງ ແລະ ຫັນໄປຮັດອຸດສາຫະກຳໄມ້ປູກຫລາຍຂຶ້ນ, ເອົາໃຈໃສ່ຂະຫຍາຍການປຸງແຕ່ງເຄື່ອງປ່າ ຂອງດົງພ້ອມດຽວກັນກໍຕ້ອງປົກປັກຮັກສາ ແລະ ຂະຫຍາຍພັນສັດ ທີ່ມີຄຸນຄ່າ ແລະ ຫາຍາກໃຫ້ນັບມື້ນັບຫລາຍຂຶ້ນ. ສ້າງປ່າ ສະຫງວນ ຫລື ອຸດທະຍານປ່າໄມ້ແຫ່ງຊາດເພື່ອຈັດການ ທ່ອງທ່ຽວສ້າງແຫລ່ງລາຍຮັບໃຫ້ແກ່ວຽກງານປ່າໄມ້ຕື່ມອີກ.

<u>ແຜນຍຸດທະສາດທີ່</u> <u>IV</u> : ແມ່ນວຽກງານກໍ່ສ້າງພະນັກງານ ແລະ ຄົ້ນຄວ້າວິທະຍາສາດ, ນຳໃຊ້ຜົນ ສຳເລັດທາງດ້ານວິທະຍາສາດ - ເຕັກນິກທີ່ກ້າວໜ້າ:

ໃນຕໍ່ໄປພວກເຮົາຕ້ອງເອົາໃຈໃສ່ເພີ່ມທະວີ ການນຳໃຊ້ນັກວິຊາການປ່າໄມ້ເຂົ້າໃນທຸກຂອດຂອງວຽກງານ ຕາມແຜນຍຸດທະສາດທີ່ໄດ້ກຳນົດໄວ້ນັ້ນ.

- ຄວາມຕ້ອງການໃນດ້ານພະນັກງານ ແລະ ກຳມະກອນເຕັກນິກ ປ່າໄມ້ ທີ່ມີຄຸນສົມບັດ ແລະ ຄວາມສາມາດຕົວຈິງ, ແຕ່ນີ້ຮອດປີ 2000 ໃຫ້ໄດ້ <u>10 ພັນຄົນ</u>. ຄົນແຖວພະນັກງານ ແລະ ກຳມະກອນເຕັກນິກປ່າໄມ້ ຕ້ອງມີໂຄງປະ

ກອບຄົບຊຸດໃນດ້ານລະດັບ, ວິຊາສະເພາະ, ປະລິມານ ແລະ ຄຸນນະພາບຮອບດ້ານ. ການກໍ່ສ້າງ ແລະ ບຳລຸງພະນັກງານປ່າໄມ້ໃຫ້ເປັນຜູ້ຮັກອາຊີບປ່າໄມ້, ມີຄວາມອົດທົນ ໜຽວແໜ້ນ, ມີຄວາມສາມັກຄີຊົນເຜົ່າ ແລະ ອື່ນໆ... ເອົາໃຈໃສ່ສ້າງພະນັກງານປ່າໄມ້ທີ່ມາ ຈາກຊົນເຜົ່າເຂດຊົນນະບົດ ແລະ ພູດອຍ ເພື່ອຈັດວາງ ແລະ ນຳໃຊ້ໃຫ້ທ້ອງຖິ່ນ ຢ່າງແທດເໝາະ.

- ແຕ່ນີ້ຮອດປີ 2000, ຕ້ອງສ້າງພື້ນຖານວັດຖຸເຕັກນິກເບື້ອງຕົ້ນໃຫ້ໜັກແໜ້ນແຕ່ລະກ້າວເພື່ອເປັນທ່ວງທ່າໃນການຄົ້ນຄວ້າ, ທົດລອງ ວິທະຍາສາດ - ເຕັກນິກດ້ານປ່າໄມ້-ນຳໃຊ້ຜົນສຳເລັດທາງດ້ານວິທະຍາສາດເຕັກນິກໃນການປູກໄມ້, ເຄື່ອງປ່າຂອງດົງ, ໃນການປຸງແຕ່ງໄມ້ ແລະ ເຄື່ອງປ່າຂອງດົງ, ໃນການປົກປັກຮັກສາສິ່ງແວດລ້ອມໃຫ້ກວ້າງຂວາງ...;

ທີ່ກອງປະຊຸມປ່າໄມ້ຄັ້ງປະຫວັດສາດ, ເລຂາທິການໃຫຍ່ພັກປະຊາຊົນປະຕິວັດລາວ ໄກສອນ ພົມວິຫານ ໄດ້ໃຫ້ຂໍ້ສະຫຼຸບກ່ຽວກັບຄວາມສຳຄັນຂອງວຽກງານປ່າໄມ້ວ່າ: " ປ່າໄມ້ ມີບົດບາດອັນສຳຄັນໃນການຄ້ຳ ຊູຊີວິດຂອງປະຊາຊົນ ເປັນລ້ານໆ ຢູ່ປະເທດເຮົາ ແລະ ປະເທດໃກ້ຄຽງເຊິ່ງບົດ ບາດອັນນີ້ບໍ່ມີສິ່ງໃດຈະເຮັດແທນໄດ້. ປ່າໄມ້ມີທາງສຳຄັນທີ່ສຸດ ຕໍ່ຊີວິດທາງດ້ານເສດຖະກິດ - ສັງຄົມ ຂອງປະເທດເຮົາບໍ່ວ່າໃນອະດີດ, ປະຈຸບັນກໍຄືໃນອະນາຄົດ ສະນັ້ນຈຶ່ງສາມາດ ເວົ້າ

ໄດ້ວ່າ ການປົກປັກຮັກສາ, ຂະຫຍາຍປ່າໄມ້ມັນພົວພັນຢ່າງສະໜິດແໜ້ນກັບຄວາມເປັນຕາຍ ແລະ ຂະຫຍາຍຕົວຂອງ ປະເທດເຮົາ. ການຂຸດຄົ້ນໄມ້ຢ່າງຊະຊາຍ, ບໍ່ມີແຜນການແລະການທຳລາຍປ່າໄມ້ບໍ່ພຽງແຕ່ເປັນການທຳລາຍຊັບພະຍາກອນອັນລ້ຳຄ່າຊຶ່ງ ຫາກຍັງເປັນການທຳລາຍອະນາຄົດແຫ່ງ ການຂະຫຍາຍຕົວຂອງປະເທດຊາດ ແລະ ເປັນການສ້າງໂທດກຳຕໍ່ຄົນຮຸ່ນຫລັງ, ຕໍ່ລູກຕໍ່ຫລານຂອງພວກເຮົາເອງ !"

ແຕ່ນີ້ຕໍ່ໄປເມື່ອໜ້າພວກເຮົາຈົ່ງພ້ອມກັນຢຸດຕິການຕັດໄມ້ ແລະ ຈູດປ່າຢ່າງສຸ່ມເຊົາ ! ຫັນໄປສູ່ການປົກປັກຮັກສາ, ປູກຂະຫຍາຍປ່າໃຫ້ໄດ້ຕາມຄວາມຫວັງ !./.

# ລະບອບພາສີອາກອນຂອງລັດ

ໃນວັນທີ່ 26 ມິຖຸນາ 1989 ຜ່ານມານີ້ ສະພາລັດຖະມົນຕີໄດ້ຕົກລົງອອກມະຕິເລກທີ່ 47/ປສລ. ວ່າດ້ວຍລະບອບພາສີອາກອນຂອງລັດ. ມະຕິຕົກລົງດັ່ງກ່າວນີ້ໄດ້ ປ່ຽນແທນໃຫ້ແກ່ມະຕິຕົກລົງສະບັບເລກທີ່ 09 ທີ່ໄດ້ປະກາດໃຊ້ໃນວັນທີ່ 12 ມີນາ 1988. ທັງນີ້ກໍເນື່ອງມາຈາກວ່າມະຕິຕົກລົງເລກທີ່ 09 ນັ້ນ ມີຫລາຍບ່ອນເຜີ, ມີຫລາຍຊ່ອງຫວ່າງ ພາໃຫ້ພວກຄົນສວຍໂອກາດລັກລອບ, ໜີພາສີ, ຄ້າຂາຍເຖື່ອນ ລາຍຮັບງົບປະມານເກັບບໍ່ໄດ້ຄົບຖ້ວນ, ບໍ່ທັນຕາມກຳນົດ ເວລາ, ນຳໄປເຖິງການຂາດດູນງົບປະມານເພີ່ມຂຶ້ນ, ຕະຫລາດຖືກປັ່ນປ່ວນ, ລາຄາສິນຄ້າຂຶ້ນນຳທຸກວັນ, ກໍ່ຄວາມ ຫຍຸ້ງຍາກໃຫ້ແກ່ຊີວິດການເປັນຢູ່ຂອງຊາວຜູ້ອອກແຮງງານ ແລະ ພະນັກງານສັງກັດລັດ, ເຮັດໃຫ້ສັງຄົມບໍ່ມີຄວາມສະຫງົບ, ຮ່ອງຮອຍຂອງລະບອບເກົ່າໄດ້ຟື້ນຊີບຄືນເຊັ່ນ: ແມ່ຈ້າງ ນາງເລີ້ງ, ຫລິ້ນການພະນັນ, ເອົາເມຍນ້ອຍຫອຍເມຍປາຍ, ຂະບວນຈັດຕັ້ງງານລາຕີ, ຫລິ້ນກິນຟູມເຟືອຍ ແລະ ອື່ນໆ ເກີດຂຶ້ນ.

ຜົນຮ້າຍທີ່ເປັນອັນຕະລາຍຢ່າງໜຶ່ງອີກທີ່ເນື່ອງ ມາຈາກການຄ້າເຖື່ອນ ແລະ ການເຮັດທຸລະກິດເຖື່ອນແມ່ນ ເຮັດໃຫ້ພະນັກງານຈຳນວນໜຶ່ງກິນສິນບົນ, ພາຍໃນເກີດຂໍ້ຂັດແຍ້ງ.

..ຍ້ອນມະຕິຕົກລົງເລກທີ 09 ມີຫລາຍຊ່ອງຫວ່າງແນວນັ້ນ ຈຶ່ງເຮັດໃຫ້ຄົນຈຳນວນໜຶ່ງນຳໃຊ້ໄປໃນທາງທີ່ບໍ່ຖືກຕ້ອງໂດຍບໍ່ເຈຕະນາ, ຜິດແນວທາງຂອງພັກ - ລັດ ເຊັ່ນ: ເກັບພາສີບໍ່ເປັນເອກະພາບ, ທ້ອງຖິ່ນນີ້ຕ່າງທ້ອງຖິ່ນອື່ນ, ແຂວງນີ້ຕ່າງແຂວງອື່ນ, ປະເພດນີ້ຢູ່ທ້ອງຖິ່ນນີ້ບໍ່ເກັບແຕ່ຢູ່ທ້ອງຖິ່ນອື່ນ ພັດເກັບດ້ານໜຶ່ງອີກການໃຊ້ຈ່າຍຈຳນວນເງິນທີ່ເກັບມາໄດ້ ກໍບໍ່ລວມສູນ, ບາງທ້ອງຖິ່ນບໍ່ສົ່ງໃຫ້ງົບປະມານ ແລະ ອື່ນໆ...

ໝາຍຄວາມວ່າມະຕິຕົກລົງຂອງສະພາລັດຖະມົນຕີ ເລກທີ່ 09 ທີ່ໄດ້ນຳອອກປະຕິບັດຜ່ານມານັ້ນບໍ່ທັນສອດຄ່ອງກັບສະພາບການຕົວຈິງຂອງພື້ນຖານເສດຖະກິດແຫ່ງຊາດພວກ ເຮົາໃນປະຈຸບັນທັງບໍ່ຄົບຖ້ວນ, ທັງບໍ່ຄົບຊຸດ, ທັງບໍ່ລະອຽດ ແລະປະປ່ອຍໃຫ້ມີຫລາຍຊ່ອງຫວ່າງເກີນໄປພາໃຫ້ການປະຕິບັດພົບຂໍ້ຫຍຸ້ງຍາກ ແລະ ມີຫລາຍຊ່ອງຫວ່າງໃຫ້ຄົນບໍ່ດີ ສວຍໂອກາດ.

ຍ້ອນເຫດຜົນດັ່ງກ່າວ ສະພາລັດຖະມົນຕີຈຶ່ງໄດ້ອອກມະຕິຕົກລົງສະບັບເລກທີ 47 ນ ແລະ ໄດ້ປະກາດໃຊ້ຢ່າງ ເປັນທາງການນັບແຕ່ວັນທີ 26 ມິຖຸນາ 1989 ເປັນຕົ້ນມາ.

ເນື້ອໃນຂອງລະບອບພາສີອາກອນທີ່ໄດ້ກຳນົດອອກໃນມະຕິຕົກລົງເລກທີ່ 47 ນີ້ ລວມມີ 7 ພາກ, 85 ມາດຕາ ຊຶ່ງພວກເຮົາຈະນຳເອົາມາສະເໜີຢູ່ໃນ ວາລະສານ ໂຄສະນາ ຂອງພວກເຮົາ, ແຕສະເພາະໃນສະບັບນີ້ພວກເຮົາຂໍສະເໜີພາກທີ່ໜຶ່ງວ່າດ້ວຍຫລັກການລວມຂອງລະບອບພາສີ ອາກອນ - ລະອຽດດັ່ງນີ້:

## ຫລັກການ ລວມ.

<u>ມາດຕາ 1:</u> ໃຫ້ປະຕິບັດລະບອບພາສີອາກອນເປັນເອກະພາບຕໍ່ທຸກພາກສ່ວນເສດຖະກິດໃນທົ່ວປະເທດ, ແນໃສ ຊຸກຍູ້ການຜະລິດ, ປົກປັກຮັກສາຊັບພະຍາກອນທຳມະຊາດ, ສົ່ງເສີມການຜະລິດທຸລະກິດຂອງທຸກພາກສ່ວນເສດຖະກິດ ຢ່າງແຂງແຮງ, ເປີດກວ້າງການຈໍລະຈອນສິນຄ້າ, ດັດສະເລຍລາຍໄດ້ລະຫວ່າງຊຸມຊົນຕ່າງໆ, ລະຫວ່າງຂະແໜງ ການຕ່າງໆ ດ້ວຍຄວາມຍຸຕິທຳ. ເຮັດໃຫ້ໂຄງປະກອບເສດຖະກິດກະສິກຳ - ປ່າໄມ້, ອຸດສາຫະກຳ, ບໍລິການປະກົດເປັນ ຕົ້ນເປັນຕົວຂຶ້ນ, ຮັບປະກັນລາຍຮັບງົບປະມານແຫ່ງຊາດ, ເຮັດໃຫ້ຕະຫລາດເງິນຕາ ແລະ ລາຄາມີຄວາມສະຫງົບປົກກະຕິ.

<u>ມາດຕາ 2:</u> ທຸກພາກສ່ວນເສດຖະກິດຂອງລັດ, ລວມ

ໝູ່, ຫຸ້ນສ່ວນລັດ - ເອກະຊົນ, ເອກະຊົນ ແລະ ເອກະ
ເທດນັບທັງຊາວຕ່າງດ້າວທີ່ມີພູມລຳເນົາຢູ່ສາທາລະນະລັດປະ
ຊາທິປະໄຕປະຊາຊົນລາວ, ຕົວແທນຂອງບໍລິສັດຕ່າງປະເທດ
ແລະ ຜູ້ ມາລົງທຶນຢູ່ລາວ, ກ່ອນຈະດຳເນີນການຜະລິດ ທຸ
ລະກິດໃນຂະແໜງການກະສິກຳ - ປ່າໄມ້, ອຸດສາຫະກຳ,
ຫັດຖະກຳ, ຂົນສົ່ງ, ກໍ່ສ້າງ, ການຄ້າ, ວັດທະນະທຳ-ສັງ
ຄົມ ແລະ ການບໍລິການອື່ນໆ ຕ້ອງໄດ້ຮັບອະນຸຍາດໃຫ້ ດຳ
ເນີນການຜະລິດ - ທຸລະກິດຈາກຂະແໜງການທີ່ກ່ຽວ ຂ້ອງ
ແລະ ຕ້ອງຂຶ້ນທະບຽນວິສາຫະກິດ, ເສຍຄ່າທຳນຽມຕາມອັດ
ຕາທີ່ໄດ້ບົ່ງໄວ້ໃນລະບຽບການຂຶ້ນທະບຽນວິສາຫະກິດ.

<u>ມາດຕາ 3</u>: ທຸກຫົວໜ່ວຍການຜະລິດ - ທຸລະກິດ ທີ່
ກ່າວໄວ້ໃນມາດຕາ 2 ເທິງນັ້ນ ແລະ ຜູ້ມີລາຍໄດ້ຈາກການ
ຜະລິດກະສິກຳ, ຈາກການໃຫ້ເຊົ່າເຄຫາສະຖານ, ຈາກການ
ແບ່ງປັນຜົນກຳໄລ, ຈາກດອກເບ້ຍການໃຫ້ກູ້ຢືມເງິນ (ນອກ
ຈາກດອກເບ້ຍເງິນຝາກທະນາຄານ ) ຈາກການປະກອບອາ
ຊີບອິດສະຫລະ, ຈາກເງິນເດືອນທີ່ເຮັດວຽກຢູ່ໃນອົງການຈັດ
ຕັ້ງບໍລິຫານຂອງພັກ ແລະ ລັດ, ວິສາຫະກິດຂອງລັດ, ລວມ
ໝູ່, ຫຸ້ນສ່ວນລັດ - ເອກະຊົນ, ເອກະຊົນ, ຢູ່ໃນ ບັນດາ
ອົງການຈັດຕັ້ງທາງການທູດ. ອົງການຈັດຕັ້ງສາກົນ, ບໍລິສັດ
ແລະ ອົງການຈັດຕັ້ງອື່ນໆຂອງຕ່າງປະເທດຢູ່ສາທາລະນະລັດ

ປະຊາທິປະໄຕ ປະຊາຊົນລາວ ຫລື ຕ່າງປະເທດນັບທັງຜູ້ນຳໃຊ້ດິນຕ້ອງໄດ້ປະຕິບັດພັນທະຕໍ່ ງົບປະມານຂອງລັດ ດ້ວຍຮູບການພາສີອາກອນ, ເວັ້ນເສຍແຕ່ບ່ອນທີ່ໄດ້ມີການຕົກລົງຕ່າງຫາກ.

<u>ມາດຕາ 4:</u> ໂຄງປະກອບຂອງພາສີອາກອນມີດັ່ງນີ້:

- ພາສີກະສິກຳ
- ພາສີທີ່ດິນ
- ພາສີຊັບພະຍາກອນລວມມີ:

+ ຄ່າປົກປັກຮັກສາ ແລະ ບູລະນະ ປ່າໄມ້.
+ ຄ່າຊັບພະຍາກອນ.
+ ຄ່າຊັກພິເສດ ຫລື ເອີ້ນວ່າພາສີຂາອອກກ່ຽວ ກັບຊັບພະຍາກອນທຳມະຊາດ.

- ພາສີຂາອອກ - ຂາເຂົ້າ.
- ປະເພດອາກອນມີ:

+ ອາກອນພາຍໃນ
+ ອາກອນທຸລະກິດ
+ ອາກອນລາຍໄດ້./

**ວຽກດີຄົນເດັ່ນ**

# ແບບຢ່າງ ໃນການຜະລິດເຂົ້ານາແຊງ

ຂະບວນການຜະລິດເຂົ້ານາແຊງຢູ່ໃນປະເທດຂອງ ພວກເຮົາພວມຂະຫຍາຍຕົວອອກຢ່າງກວ້າງຂວາງ ແລະ ປະສິດທິຜົນຂອງມັນ ກໍ່ນັບມື້ນັບສູງຂຶ້ນເລື້ອຍໆ. ໃນປີທີ່ຜ່ານມາ ໄດ້ມີນາແຊງຫລາຍບ່ອນປະຕິບັດໄດ້ຕາມຕົວເລກຄາດໝາຍ ທີ່ທາງເທິງວາງອອກ ແລະ ມີບາງໜ່ວຍ, ບາງຄອບຄົວແມ່ນໄດ້ຮັບໝາກຜົນສູງເຖິງ 5 ໂຕນກວ່າຕໍ່ໜຶ່ງເຮັກຕາ.

ສະຫະກອນບ້ານທາດຫລວງໃຕ້, ເມືອງໄຊເສດຖາ, ກຳແພງນະຄອນວຽງຈັນກໍ່ແມ່ນໜຶ່ງໃນຫົວໜ່ວຍການຜະລິດທີ່ບັນລຸໝາກຜົນດັ່ງກ່າວຢ່າງສະຫງ່າງາມ.

ຕາມການເລົ່າຂອງລຸງມະຫາໄຊ. ຫົວໜ້າໜ່ວຍສະຫະກອນບ້ານທາດຫລວງໃຕ້ວ່າ: ໜ່ວຍສະຫະກອນດັ່ງກ່າວແມ່ນໄດ້ສ້າງຕັ້ງຂຶ້ນໃນປີ 1976 ເປັນຕົ້ນມາ. ປະກອບດ້ວຍ 18 ຄອບຄົວ, ມີ 18 ແຮງງານຕົ້ນຕໍ ແລະ 8 ແຮງງານ ສຳຮອງເທົ່ານັ້ນ, ເຖິງວ່າໃນແຕ່ລະງວດການຜະລິດຈະມີ ແຮງງານບໍ່ເທົ່າໃດແຕ່ໜ່ວຍສະຫະກອນ ບ້ານທາດຫລວງ ໃຕ້ນີ້ກໍ່ໄດ້ສາມັກຄີກັນອອກເຫື່ອເທແຮງທຳການຜະລິດຢ່າງບໍ່ລົດລະ

ບໍ່ວ່າລະດູນາແຊງ ກໍ່ດີນາປີ ໜ່ວຍສະຫະກອນແຫ່ງນີ້ກໍບໍ່ໄດ້ມີ
ຄວາມແບ່ງແຍກແຕກຄວາມສາມັກຄີກັນ, ພ້ອມກັນເຣັດ, ພ້ອມ
ກັນທຳດ້ວຍຈິດໃຈຫ້າວຫັນ. ຄື່ງລຸງມະຫາໄຊໄດ້ເລົ່າ ລະ
ອຽດກ່ຽວກັບວິທີເຣັດນາແຊງປີຜ່ານມາແມ່ນໄດ້ອີງໃສ່ບົດຮຽນ
ຕົວຈິງທີ່ຖອດຖອນມາໄດ້ໃນແຕ່ລະລະດູການຜະລິດ ແລະເຣັດ
ຖືກຕ້ອງຕາມເຕັກນິກທີ່ທາງພະແນກກະສິກຳເມືອງ ແນະ ນຳ
ໃຫ້ເປັນຕົ້ນແມ່ນການກຽມດິນ, ທຳອິດແມ່ນຈູດຕໍ່ເຟືອງສາກອນ
ຫຼັງຈາກນັ້ນ, ກໍຂັງນ້ຳເຂົ້າເພື່ອບົ່ມໄວ້ໃຫ້ດິນອ່ອນ ແລະໄຖ
ງ່າຍ. ຈາກນັ້ນຈຶ່ງກຽມຫວ່ານກ້າ. ກ່ອນຈະຫວ່ານກ້າກໍ່ເອົາ
ເຂົ້າໄປແຊ່ນ້ຳໄວ້ 24 ຊົ່ວໂມງຈຶ່ງນຳມາຕາກແດດ ໃຫ້ແຫ້ງ
ແລ້ວຈຶ່ງເອົາໄປແຊ່ນ້ຳອີກ 2 ຄືນ, ພັດຂຶ້ນມາບົ່ມຄືນຈຶ່ງເອົາ
ໄປຫວ່ານ, ພາຍຫຼັງຫວ່ານໄດ້ 20 ວັນ, ເບ້ຍກ້າ ຈະ
ເປັນດຳແລ້ວກໍ່ຮີບຮ້ອນຖາກຖາງຄັນນາໃຫ້ກຽງດີແລ້ວຈຶ່ງເອົາ
ລົດນາໄຖກ່ອນຈຶ່ງເອົາຄວາຍມາລາດໃຫ້ພຽງດີ, ເອົາປຸ໋ຍນ້ຳ
ເບີ 16 ຮອງພື້ນ. ສາກອນແລ້ວຈຶ່ງດຳຄິດສະເລ່ຍເຮັກ ຕາ
ໜຶ່ງຕໍ່ປຸ໋ຍ 120 ກິໂລ, ເວລາດຳແມ່ນໃນນາດ ຕາ ສ່ວນ
20 × 25 ຊັງຕີແມັດ, ສຸມໜຶ່ງໃສ່ກ້າ 4 - 5 ກິບເທົ່າ
ນັ້ນ, ເມື່ອດຳສຳເລັດແລ້ວປະມານ 15 - 20 ວັນ ກໍໄດ້
ເອົາປຸ໋ຍເລັ່ງນ້ຳເບີ 46 ໃສ່ຕື່ມອີກໃນເວລາໃສ່ປຸ໋ຍ ແຕ່ລະ
ເທື່ອນັ້ນໄດ້ປ່ອຍນ້ຳອອກໃຫ້ຍັງເຫຼືອນ້ຳໄວ້ພຽງແຕ່ 20 ຊັງ

ຕິແມັດ. ພາຍຫລັງປັກດຳສຳເລັດເປັນທີ່ຮຽບຮ້ອຍແລ້ວ ກໍໄດ້ເອົາໃຈໃສ່ບົວລະບັດເປັນພິເສດເພາະເປັນບັນຫາຕັດສິນ ຊີ້ຂາດໃນລະດູການຜະລິດ. ທຸກຄົນພາຍໃນໜ່ວຍໄດ້ສຸມທຸກກຳລັງເຫື່ອແຮງບົວລະບັດປົກປັກຮັກສານ້ຳໃຫ້ ສະໝ່ຳສະເໝີພ້ອມທັງໃສ່ຝຸ່ນ, ເສຍຫຍ້າ, ຂ້າບົ້ງແມງ. ແຕ່ລະມື້ ຕ້ອງ


ການກອມດຳນາແຊງ

ໄດ້ແບ່ງກັນໄປສຳຫລວດເບິ່ງຖ້າເຫັນໄຮ່ນາບ່ອນໃດມີ ບົ້ງ, ແມງ ຫລື ແມງໄມ້ທີ່ມັກທຳລາຍຕົ້ນເຂົ້າກໍ່ເອົາຢາຂ້າມັນແລະໄດ້ຕິດຕາມໄປແຕ່ລະໄລຍະ. ຜ່ານການເຮັດຕົວຈິງຄືແນວນັ້ນແຕ່ລະປີກໍໄດ້ຮັບໝາກຜົນດີສົມຄວນ. ເດັ່ນກວ່າໝູ່ແມ່ນລະດູການຜະລິດນາແຊງປີ 88 - 89 ນີ້, ສະຫະກອນບ້ານທາດຫລວງໃຕ້ເກັບກ່ຽວເຂົ້ານາແຊງໄດ້ເຖິງ 27 ໂຕນປາຍ ໃນເນື້ອນາ 5 ເຮັກຕາ.

ໝາກຜົນທີ່ປະກົດຂຶ້ນມານັ້ນກໍຍ້ອນຄວາມດຸໝັ່ນ ຂະຫຍັນພຽນຂອງສະມາຊິກທຸກຄົນ ໄດ້ສາມັກຄີກັນຢ່າງແໜ້ນແຟ້ນເຂົ້າໃນການຜະລິດນັ້ນຈຶ່ງສະແດງອອກບ່ອນວ່າ ສະມາຊິກ ສະຫະກອນທຸກຄົນໃນປີໜຶ່ງໆ ສາມາດກຸ້ມຕົນເອງເພິ່ງຕົນເອງ ໄດ້ທາງດ້ານສະບຽງອາຫານ, ນອກນັ້ນທາງໜ່ວຍ ສະຫະກອນກໍ່ມີສ່ວນແຮໄວ້ 3 - 4 ໂຕນ ເພື່ອແກ້ໄຂເວລາຄອບຄົວໃດຫາກອຶດຢາກຂາດແຄນ ຫຼື ເຈັບເປັນຕ່າງໆ ພ້ອມທັງ ຂາຍເພື່ອເປັນເງິນທຶນຂອງໜ່ວຍສະຫະກອນເຖິງ 63 ພັນກີບ.

ໄປຄຽງຄູ່ກັບຜົນງານທີ່ກ່າວມາຂ້າງເທິງນັ້ນ. ສະຫະກອນແຫ່ງດັ່ງກ່າວຍັງມີຂໍ້ຫຍຸ້ງຍາກຫຼາຍປະການ ເປັນຕົ້ນແມ່ນພາຫະນະໃນການຜະລິດແມ່ນໄດ້ໄປເຊົ່າເອົາບ່ອນອື່ນ, ປູ໋ຍ, ຢາຂ້າສັດຕູພືດ ຍັງຂາດເຂີນກຳລັງແຮງງານການຜະລິດ ສ່ວນຫຼາຍແມ່ນກຳລັງຂອງຜູ້ເຖົ້າ. ແຕ່ຢ່າງໃດກໍ່ດີລຸງມະຫາ ໄຊຍັງໄດ້ເນັ້ນໜັກວ່າ: ຫຼັງຈາກເກັບກ່ຽວມ້ຽນມັດເຂົ້ານາປີປີນີ້ແລ້ວ ທາງໜ່ວຍສະຫະກອນຍັງຈະໄດ້ອອກແຮງ ບຸກເບີກດິນຢູ່ທົ່ງຮາບເພື່ອຈະປູກພືດພັນທັນຍາຫານຕ່າງໆ ແນໃສ່ ນຳໃຊ້ທີ່ດິນໃຫ້ໝົດຄຸນປະໂຫຍດເພື່ອສ້າງຜະລິດຜົນຂາອອກ ໄດ້ຫຼາຍ, ປະກອບສ່ວນເຂົ້າໃນຕົວເລກຄາດໝາຍ ຂອງຂັ້ນເທິງວາງອອກ 1,6 ລ້ານໂຕນ./.




# ກອງທັບອາສະໝັກຫວຽດນາມ ທັງໝົດຖອນອອກຈາກ ກຳປູເຈຍຄັ້ງສຸດທ້າຍ

ສົງຄາມປົດປ່ອຍຊາດຕ້ານຈັກກະພັດອາເມລິກາຢູ່ລາວ - ຫວຽດນາມ ແລະ ກຳປູເຈຍໃນປີ 1975 ໄດ້ກ້າວເຂົ້າສູ່ໄລຍະຕັດສິນໄຊຊະນະ. ສະໜາມຮົບ ອິນດູຈີນແມ່ນ ສະໜາມຮົບຕ້ານກັບຈັກກະພັດໂຕຫົວໂປ ແລະ ເຂັ້ມແຂງທີ່ສຸດ ໃນໂລກ. ແຕ່ຍ້ອນກຳລັງປະຕິວັດຂອງປະຊາຊົນຂອງສາມ ຊາດອິນດູຈີນ ແມ່ນການສຳພັນສູ້ຮົບແບບພິເສດ, ຮ່ວມຊຸມຄອງດຽວກັນຕ້ານສັດຕູໂຕດຽວກັນ ຈຶ່ງສາມາດຍາດເອົາໄຊຊະນະ ແລະ ເຮັດໃຫ້ສົງຄາມຈັກກະພັດ ຕ້ານ 3 ປະເທດ ອິນດູຈີນສິ້ນສຸດລົງ. ວັນທີ 17 ເມສາ 1975 ທະຫານ ແລະ ປະຊາຊົນກຳປູເຈຍ ໄດ້ຮັບໄຊຊະນະ; ວັນທີ 30 ເມສາ ປີດຽວກັນ ທະຫານ ແລະ ປະຊາຊົນຫວຽດນາມກໍ່ປົດປ່ອຍ ທົ່ວປະເທດ; ແລະ ຈາກນັ້ນ ທີ 2 ທັນວາ ປີ ດຽວກັນ ລາວເຮົາກໍ່ຍຶດອຳນາດທົ່ວປະເທດຢ່າງສົມບູນ. ສາມ ປະເທດພ້ອມກັນມີສັນຕິພາບ.

ແຕ່ເປັນໜ້າເສຍດາຍ, ໝາກຜົນຂອງການ ປະຕິວັດລວມ ແລະ ສັນຕິພາບທີ່ພ້ອມກັນຍາດມາໄດ້ນັ້ນ, ຜູ້ກຳອຳນາດກຳປູເຈຍ ພັດກາຍເປັນຜູ້ກະບົດຕໍ່ການປະຕິວັດ, ຕໍ່ການ ຕໍ່ສູ້ຮ່ວມ, ກາຍເປັນສັດຕູຂອງປະຊາຊົນອິນດູຈີນ. ພວກໂປນປົດອຽງສາລີ, ຂຽວສົມພອນ ກາຍເປັນກຸ່ມເຜັດຊະຄາດ, ຕ້ານກັບປະຊາຊົນກຳປູເຈຍ, ລ້າງຜານເຜົ່າພັນ, ເຂັ່ນຂ້າ ດັບສູນຊາດທີ່ບໍ່ເຄີຍມີມາໃນປະຫວັດສາດຂອງ ກຳປູເຈຍ; ນັກຮຽນຮູ້, ນັກສຶກສາ, ປັນຍາຊົນ, ພະສົງສາມະເນນ ຕະຫຼອດຮອດປະຊາຊົນສາມັນກໍລ້ວນແຕ່ເປັນເປົ້າໝາຍປະຫານ ຊີວິດຢ່າງສົມເພດເວດທະນາ. ພື້ນຖານເສດຖະກິດ, ວັດທະນະທຳຮີດຄອງປະເພນີຖືກທຳລາຍເຖິງກົກເຖິງຮາກ; ເຮັດໃຫ້ ສັງຄົມ ກຳປູເຈຍ ກາຍເປັນກອງກະດູກ ແລະ ຢາດນ້ຳຕາ, ບ້ານເມືອງເປົ່າຮ້າງ ກາຍເປັນຄຸກຄາ ແລະ ປ່າຊ້າ ທີ່ໜ້າຢ້ານກົວ. ໃນເວລາທີ່ປະເທດ ກຳປູເຈຍໄດ້ຕົກຢູ່ໃນ ເຫວເລິກອັນມືດມົນນັ້ນ, ພວກໂປນປົດຊໍ້າພັດກໍ່ກະບົດ, ເຮັດ ສົງຄາມຕ້ານກັບປະເທດເພື່ອນບ້ານທີ່ເປັນພັນທະມິດຮ່ວມ ສຳພັນສູ້ຮົບມົນນັ້ນບົນຮ້າຍແຮງ, ຕາມຊາຍແດນທິດຕາເວັນຕົກ ສ່ຽງໃຕ້ຂອງປະເທດຫວຽດນາມ ທັງເວັນ ແລະ ຄືນ ພວກ ເຜັດຊະຄາດ ໂປນປົດໄດ້ເຂັ່ນຂ້າປະຊາຊົນຫວຽດນາມ ຢ່າງ ບໍ່ກະດຽມມື, ເຮືອນຊານ, ໄຮ່ນາ ຮົ້ວສວນ ລ້ວນແຕ່ຖືກ ທະຫານໂປນປົດ ທຳລາຍໝົດກ້ຽງ. ກຸ່ມໂປນປົດໄດ້ ກາຍເປັນ

ສັດຕູໂຕໂຫດຮ້າຍ ແລະ ໜ້າຢ້ານ ຂອງປະຊາຊົນ ກຳ ປູເຈຍ, ຂອງປະຊາຊົນຫວຽດນາມ ແລະ ປະຊາຊົນລາວ; ເຂົາໄດ້ກາຍເປັນຜູ້ກະບົດຕໍ່ອຸດົມການແຫງປະຫວັດສາດ ຕ້ານຈັກກະພັດ ຫັນມາຕ້ານພັນທະມິດ, ຕ້ານປະຊາຊົນ.

ໂດຍປະຕິບັດສິດປ້ອງກັນຕົວຢ່າງຖືກຕ້ອງເປັນທຳ, ເພື່ອປົກປັກຮັກສາເຂດນ້ຳແດນດິນຂອງຕົນ ແລະ ຕອບສະໜອງຕາມຄວາມຮຽກຮ້ອງຂອງປະຊາຊົນ ກຳປູເຈຍ, ຂອງ ແນວໂຮມສາມັກຄີຊາດເພື່ອກູ້ຊາດ ກຳປູເຈຍ, ກຳລັງອາສາ ສະໝັກຫວຽດນາມ ຈຶ່ງໄດ້ເຂົ້າໄປ ກຳປູເຈຍ ແລະ ຕໍ່ສູ້ ຄຽງບ່າຄຽງໄຫລ່ຮ່ວມກັບກຳລັງປະກອບອາວຸດ ແລະ ປະຊາຊົນກຳປູເຈຍ ທັບມ້າງ ລະບອບດັບສູນເຊື້ອຊາດ ໂປນປົດ, ປົດປ່ອຍເອົາຊາດ ກຳປູເຈຍ ໃນວັນທີ 7 ມັງກອນ ປີ1979. ນັບແຕ່ນັ້ນມາ, ປະເທດສາທາລະນະລັດປະຊາຊົນກຳປູເຈຍ ໄດ້ກຳເນີດເກີດຂຶ້ນ ແລະ ກາຍເປັນລັດ ກຳປູເຈຍ ໃນປະຈຸບັນ.

ພາຍຫລັງໂຄ່ນລົ້ມລະບອບດັບສູນເຊື້ອຊາດໂປນປົດ, ກອງທັບອາສາສະໝັກຫວຽດນາມ ມີຄວາມຈຳເປັນຕ້ອງໄດ້ ປະຕິບັດຕາມການຮຽກຮ້ອງ ຂອງລັດ ກຳປູເຈຍ ໃຫ້ສືບຕໍ່ ຊ່ວຍເຫລືອ ປະຊາຊົນ ແລະ ກຳລັງປະກອບອາວຸດ ປະຕິວັດ ກຳປູເຈຍ ໃນການປົກປັກຮັກສາປະເທດຊາດ ແລະ ການຟື້ນຟູຄືນໃໝ່, ຕ້ານພວກໂປນປົດ ແລະ ອິດທິກຳລັງ ປະຕິການ

ອື່ນໆ ທີ່ພະຍາຍາມຢາກຟື້ນຟູລະບອບດັບສູນເຊື້ອຊາດ ໃນກຳປູເຈຍ. ປະເທດຊາດ ກຳປູເຈຍ ພາຍຫຼັງໂຄ່ນລົ້ມ ລະບອບດັບສູນເຊື້ອຊາດໂປນປົດນັ້ນແມ່ນມີແຕ່ຝາມືເປົ່າເພື່ອເລີ່ມຕົ້ນສ້າງລະບອບໃໝ່. 10 ປີ ຜ່ານມາ, ໂດຍໄດ້ຮັບການຊ່ວຍເຫຼືອຮອບດ້ານຈາກປະຊາຊົນຫວຽດນາມ, ລາວ ແລະ ບັນດາປະເທດສັງຄົມນິຍົມອ້າຍນ້ອງ, ພາຍໃຕ້ການນຳພາຂອງພັກປະຊາຊົນປະຕິວັດ ກຳປູເຈຍ, ປະຊາຊົນ ກຳປູເຈຍແລະກຳລັງປະກອບອາວຸດ ປະຕິວັດ ກຳປູເຈຍໄດ້ເປັນເຈົ້າຊະຕາກຳ ຕໍ່ ປະເທດຊາດຂອງຕົນ; ລົບລ້າງຜົນຮ້າຍທີ່ລະບອບດັບສູນເຊື້ອຊາດປະໄວ້, ນຳເອົາປະເທດຊາດຟື້ນຊີວິດ ໃໝ່ ແລະ ກ້າວຂຶ້ນຢ່າງບໍ່ຢຸດຢັ້ງ. ລັດ ກຳປູເຈຍມີກຳລັງ ແລະ ຄວາມສາມາດຢ່າງເຊື່ອໝັ້ນໃນການເປັນເຈົ້າຕົນເອງປົກປັກຮັກສາ ແລະ ສ້າງສາປະເທດຊາດຕໍ່ໄປ, ກຽມຮັບມືໃນການປະຕິບັດຄວາມຖືກຕ້ອງປອງດອງຊາດ, ຮັບປະກັນໝາກ ຜົນຂອງການປະຕິວັດ ກຳປູເຈຍ, ຕ້ານທຸກການກັບຄືນມາ ມີອຳນາດຂອງຂະເໝນແດງ.

ໂດຍຍຶດຖືແນວທາງທີ່ບໍ່ປ່ຽນແປງຂອງສາທາລະນະລັດສັງຄົມນິຍົມຫວຽດນາມ ຄື ເຄົາລົບຕໍ່ເອກະລາດ, ອຳນາດ ອະທິປະໄຕ ແລະ ດິນແດນອັນຄົບຖ້ວນຂອງລັດ ກຳປູເຈຍ ຢ່າງເຂັ້ມງວດ ແລະ ອີງໃສ່ສະພາບຄວາມເປັນຈິງແຫ່ງ ຄວາມເຕີບໃຫຍ່ເຂັ້ມແຂງ ຂອງບັນດາກຳລັງປະກອບອາວຸດ ປະຊາ

ຊົນກຳປູເຈຍ, ນັບແຕ່ປີ 1982 ເປັນຕົ້ນມາ ກຳລັງອາສາສະໝັກ ຫວຽດນາມ ກໍ່ໄດ້ຖອນກັບປະເທດເຖິງ 7 ຄັ້ງ, ຮອດວັນທີ່ 26 ກັນຍາ ປີ 1989 ນີ້ ກຳລັງອາສາສະໝັກຫວຽດນາມທັງໝົດພ້ອມດ້ວຍ ອາວຸດ ແລະ ອຸປະກອນ ທາງທະຫານໄດ້ຖອນກັບຄືນປະເທດເປັນຄັ້ງສຸດທ້າຍ. ນັກສັງເກດການຈາກ 20 ປະເທດ, 6 ອົງການຈັດຕັ້ງສາກົນ ແລະ ນັກຂ່າວ, ໜັງສືພິມຈາກຕ່າງປະເທດ 400 ກວ່າ ຄົນ ໄດ້ເຂົ້າມາ ກຳປູເຈຍ ເພື່ອເປັນພະຍານໃນການຖອນ ທະຫານຄັ້ງນີ້ດ້ວຍ.

ການຖອນກຳລັງອາສາສະໝັກຫວຽດນາມ ໄດ້ ສຳເລັດລົງຢ່າງສະຫງ່າງາມ, ນຳເອົາໄຊຊະນະອັນຍິ່ງໃຫຍ່ເພີ່ມທະວີໃຫ້ແກ່ນາມມະຍົດນັກຮົບວິລະຊົນຜູ້ກ້າຫານ ປະດັບໃຫ້ກຽດສັກສີ ຂອງຊາດ ແລະ ປະຊາຊົນຫວຽດນາມຜູ້ມີມູນເຊື້ອຕໍ່ຊະນະສັດຕູທຸກໂຕ, ພ້ອມນັ້ນ ມັນແມ່ນໄຊຊະນະອັນຍິ່ງໃຫຍ່ ຂອງການປະຕິວັດກຳປູເຈຍ, ສະແດງໃຫ້ເຫັນເຖິງຄວາມເຕີບໃຫຍ່ເຂັ້ມແຂງ ຂອງ ກຳລັງປະກອບອາວຸດ ກຳປູເຈຍ ແລະການປະລາໄຊ ຂອງ ພວກປະຕິການ ເປັນຕົ້ນແມ່ນກຸ່ມ ຂະເໝນແດງ ແລະ ອິດທິກຳລັງຕ່າງປະເທດ ທີ່ໃຫ້ການສະໜັບ ສະໜູນ ພວກດັບສູນເຊື້ອຊາດໂປນປົດ. ການຖອນກຳລັງອາສາສະໝັກຫວຽດນາມ ແມ່ນການສ້າງເງື່ອນໄຂໃຫ້ແກ່ການ ແກ້ໄຂບັນຫາ ກຳປູເຈຍດ້ວຍ ວິທີທາງການເມືອງ, ແມ່ນການ

ປະຕິບັດຕາມຄຳໝັ້ນສັນຍາທີ່ໄດ້ໃຫ້ໄວ້ລະຫວ່າງ ສາທາລະນະລັດສັງຄົມນິຍົມຫວຽດນາມ ແລະ ລັດ ກຳປູເຈຍ, ແມ່ນເງື່ອນໄຂເບື້ອງຕົ້ນເພື່ອເປີດໄລຍະທາງແຫ່ງການສ້າງຄວາມປອງດອງຊາດ ຢູ່ ກຳປູເຈຍ, ເຊິ່ງໃນໄລຍະຜ່ານມາ ມີຫລາຍປະເທດອີງໃສ່ແຕ່ການມີໜ້າຂອງ ທະຫານ ອາສາສະໝັກຫວຽດນາມ ຢູ່ ກຳປູເຈຍເພື່ອໃຫ້ການສະໜັບ ສະໜູນຊ່ວຍເຫລືອຂະເໝນແດງ.

ການຖອນອາສາສະໝັກຫວຽດນາມເທື່ອສຸດທ້າຍຍັງເປັນການສິ້ນສຸດຊ່ວງປະຫວັດສາດຊ່ວງໜຶ່ງໃນປະຫວັດສາດ ຂອງອິນດູຈີນເພື່ອນຳເອົາສັນຕິພາບມາໃຫ້ແກ່ປະຊາຊາດ ອິນດູຈີນອີກເທື່ອໜຶ່ງ. ກຳລັງອາສາສະໝັກຫວຽດນາມ ໄດ້ສຳເລັດໜ້າທີ່ສາກົນອັນສູງສົ່ງ ແລະ ລ້ຳເລີດທີ່ສຸດ ທີ່ເປັນຊ່ວງ ເວລາແຫ່ງສັນຕິພາບທີ່ຫາຍາກ.

ປັດຈຸບັນ, ບັນຫາອັນຮີບດ່ວນທີ່ຍັງຈະຕ້ອງແກ້ໄຂ ໃຫ້ແກ່ບັນຫາ ກຳປູເຈຍ ແມ່ນການປະຕິບັດການຢຸດຍິງຢູ່ກຳປູເຈຍ, ຢຸດຕິການໃຫ້ການຊ່ວຍເຫລືອທາງທະຫານທຸກຢ່າງ ແກ່ ຂະເໝນຝ່າຍຕ່າງໆ, ຢຸດຕິການແຊກແຊງເຂົ້າວຽກງານ ພາຍໃນຂອງ ກຳປູເຈຍ, ສະກັດກັ້ນສົງຄາມພາຍໃນ, ເຮັດ ທຸກສິ່ງທຸກຢ່າງບໍ່ໃຫ້ ລະບອບດັບສູນເຊື້ອຊາດໂປນປົດກັບຄືນ ມາມີອຳນາດອີກ. ທຸກໆປະເທດລ້ວນແຕ່ມີຄວາມຮັບຜິດຊອບຕໍ່ສັນຕິພາບ ພາຍໃນ ກຳປູເຈຍ, ສ້າງເງື່ອນໄຂອັນດີໃຫ້ແກ່ຊ່ອງທາງການແກ້ໄຂບັນຫາ ກຳປູເຈຍ ທາງດ້ານການເມືອງ.

ປະຊາຊົນ ລາວບັນດາເຜົ່າພວກເຮົາໆເຊື່ອໝັ້ນວ່າ ທຸກໆບັນຫາທີ່ເກີດຂຶ້ນພາຍໃນ ກຳປູເຈຍ, ແມ່ນບັນຫາຂອງ ກຳປູເຈຍ, ປະຊາຊົນ ກຳປູເຈຍມີສິດຕັດສິນ ໂຊກຊາຕາ ກຳຂອງຕົນເອງດ້ວຍສິດເປັນເຈົ້າຂອງຕົນເອງຢ່າງເປັນ ເອກະລາດ - ຄວາມສາມັກຄີອັນພິເສດ, ການຮ່ວມມືຮອບດ້ານລະຫວ່າງປະຊາຊົນ 3 ຊາດ ອິນດູຈີນ ລາວ, ຫວຽດນາມ, ກຳປູເຈຍ ແມ່ນບໍ່ມີສັດຕູໂຕໃດຈະມາມ້າງ, ທຳລາຍໄດ້, ປະຊາຊົນ ກຳປູເຈຍຈະຕ້ອງໄດ້ຮັບໄຊຊະນະ ແລະ ນຳເອົາ ປະເທດຊາດກ້າວຂຶ້ນຕາມເສັ້ນທາງອັນສະຫວ່າງສະໄຫວ ຂອງຕົນ.

# ສາທາລະນະລັດປະຊາທິປະໄຕເຢຍລະມັນ
# 40 ປີແຫ່ງການກ້າວຂຶ້ນສັງຄົມນິຍົມ

ພາຍຫລັງໄດ້ຮັບການປົດປ່ອຍໃນປີ 1945, ສ.ປ.ຍ ໄດ້ຮັບການສະຖາປະນາຂຶ້ນໃນວັນທີ 7 / 10 / 1949. ເບື້ອງຕົ້ນ ສປຍ ໄດ້ປະສົບກັບຄວາມຫຍຸ້ງຍາກຫລາຍ ຢ່າງ ເຊັ່ນ: ການປິດລ້ອມດ້ານເສດຖະກິດ ແລະ ການເນືອງຈາກພວກຈັກກະພັດ,.. ແຕ່ ໃຕ້ການນຳພາຂອງພັກສັງຄົມ ນິຍົມເອກະພາບ ເຢຍລະມັນ ແລະ ດ້ວຍການຊ່ວຍເຫລືອຢ່າງໜັ້ນການຂອງ ສ. ໂຊວຽດ, ສປຍ ຈຶ່ງໄດ້ຖືກຮັບຮູ້ເປັນ ກ້າວໆໃນເວທີສາກົນ.

ສປຍ ໄດ້ດຳເນີນການກໍ່ສ້າງສັງຄົມນິຍົມຂະຫຍາຍຕົວມາແຕ່ຕົ້ນຊຸມປີ 1970. ກອງປະຊຸມໃຫຍ່ຄັ້ງທີ 8 ( 6/ 71) ຂອງສູນກາງພັກ ສ.ອ.ຍ ໄດ້ວາງຍຸດທະສາດ ໄລຍະຍາວນານຕາມທິດທາງແຫ່ງຄວາມເປັນເອກະພາບ ທາງດ້ານເສດຖະກິດ ແລະ ສັງຄົມ. ກອງປະຊຸມໃຫຍ່ຄັ້ງທີ 11 (1986) ຂອງສູນກາງພັກ ສ.ອ.ຍ ໄດ້ຢືນຢັນວ່າ: ປະຈຸບັນ ສປຍ ພວມສືບຕໍ່ກໍ່ສ້າງສັງຄົມນິຍົມຂະຫຍາຍຕົວ ຊຶ່ງການກໍ່ສ້າງ ສັງຄົມນິຍົມແມ່ນຂະບວນການປະຫວັດສາດແຫ່ງການ ປ່ຽນແປງ

ຢ່າງເລິກເຊິ່ງທາງດ້ານການເມືອງ, ເສດຖະກິດ, ສັງຄົມ ແລະ ວັດທະນະທຳ. ແນວຄິດ.

ມາຮອດປະຈຸບັນ ສປຢ ໄດ້ຖືກຈັດເຂົ້າຢູ່ໃນຈຳນວນ 10 ປະເທດທີ່ມີອຸດສາຫະກຳຂະຫຍາຍຕົວກວ່າໝູ່ໃນໂລກ. ທົ່ວປະເທດມີບໍລິສັດ ແລະ ສະຫະບໍລິສັດອຸດສາຫະກຳ ເຖິງ 4000 ແຫ່ງ ໃຊ້ແຮງງານເຖິງ 38% ຂອງແຮງງານທັງໝົດ 8,6 ລ້ານຄົນ. ການພັດທະນາເສດຖະກິດທີ່ມີລາຍໄດ້ ເປັນສ່ວນໃຫຍ່ແມ່ນມາຈາກຂະແໜງອຸດສາຫະກຳ ຊຶ່ງປະກອບ ມີເຖິງ 70% ຂອງລາຍໄດ້ແຫ່ງຊາດ ແລະ 90% ຂອງ ຂາອອກທັງໝົດຂອງ ສປຢ.

ໃນແຜນການ 5 ປີ 1986 - 1990 ສປຢ. ໄດ້ວາງຄາດໝາຍໄວ້ດັ່ງນີ້: ລາຍໄດ້ແຫ່ງຊາດຈະຕ້ອງ ເພີ່ມຂຶ້ນ 25%; ຜົນຜະລິດລວມຍອດໃຫ້ເພີ່ມຂຶ້ນ 50%; ສະມັດຖະພາບຂອງງານໃຫ້ເພີ່ມຂຶ້ນ 50%; ການເກັບກ່ຽວດ້ານກະສິກຳໃຫ້ເພີ່ມຂຶ້ນ 5 - 5,2 ໂຕນຕໍ່ເຮັກຕາ; ການຜະລິດດ້ານ ອຸດສາຫະກຳໃຫ້ເພີ່ມຂຶ້ນ 49 - 51%; ລາຍໄດ້ສະເລ່ຍ ຂອງປະຊາຊົນຈະເພີ່ມຂຶ້ນ 21 - 22% ແລະ ໄລຍະ 5 ປີ ນີ້ຄາດວ່າຈະສາມາດປະຢັດແຮງງານໄດ້ເຖິງ 3 ແສນ ກວ່າແຮງງານ. ນອກຈາກນີ້ ສປຢ ຍັງມີເປົ້າໝາຍຈະສືບຕໍ່ ເອົາໃຈໃສ່ບັນຫາເຮືອນພັກເຊົາໃຫ້ແກ່ປະຊາຊົນໃຫ້ສຳເລັດ. ໃນ ປີ

1990 ສປປ ຈະສ້ອມແປງເຮືອນເກົ່າໃຫ້ທັນສະໄໝ ແລະ ສ້າງອາຄານໃໝ່ ໃຫ້ໄດ້ 2 ແສນ ຫ້ອງຕໍ່ປີ.

ນະໂຍບາຍການເມືອງຂອງ ສປປ ທີ່ໄດ້ກຳນົດອອກ ນັ້ນ ແມ່ນໄດ້ຮັບການສະຖາປະນາຂຶ້ນມາ ຄື: "ເຮັດທຸກສິ່ງ ທຸກຢ່າງເພື່ອບໍ່ໃຫ້ສົງຄາມເກີດຂຶ້ນອີກຢູ່ເທິງພື້ນແຜ່ນດິນ ເຢຍລະມັນ ແລະ ຕ້ອງເຮັດໃຫ້ມີແຕ່ສັນຕິພາບຢູ່ໃນດິນແດນແຫ່ງນີ້". ໂດຍຢຶດໝັ້ນຕໍ່ແນວທາງດັ່ງກ່າວ ສປປ. ຍາມໃດກໍ່ ຢືນຢູ່ຄຽງຂ້າງກັບພັນທະມິດຂອງຕົນ ແລະ ກຳລັງຮັກຫອມ ສັນຕິພາບໃນໂລກຕໍ່ສູ້ເພື່ອສັນຕິພາບ ແລະ ຄວາມໝັ້ນຄົງ ຂອງໂລກ.

ສປປ ສະໜັບສະໜູນທຸກປະເທດທີ່ກຳລັງພັດທະນາ ໃນການຕໍ່ສູ້ເພື່ອຄວາມເປັນທຳ ແລະ ສະເໝີພາບຂອງການພົວພັນສາກົນ, ລົບລ້າງລະບອບຈຳແນກເຊື້ອຊາດຜິວພັນ, ລົບລ້າງລັດທິລ່າເມືອງຂຶ້ນ ແລະ ກົດຂີ່ຂູດຮີດ. ໃນພາກປະຕິບັດຕົວຈິງ, ສປປ ໄດ້ປະຕິບັດພັນທະສາກົນຕໍ່ປະເທດຕ່າງໆ ຄື ຄວາມສາມັກຄີຊ່ວຍເຫລືອ ແລະ ສະໜັບສະໜູນ ທາງການເມືອງໂດຍທາງກົງ ແລະ ທາງອ້ອມແກ່ ນິກາຣາກົວ, ເອທີໂອປີ, ໂມຊຳບິກ, ອັງໂກລາ ແລະ ບັນດາປະເທດອື່ນໆ.

ຕໍ່ຂະບວນການຕໍ່ສູ້ເພື່ອສັນຕິພາບ ແລະ ຫລຸດຜ່ອນກຳລັງອາວຸດ, ສປປ ໄດ້ເຂົ້າຮ່ວມການເຈລະຈາສາກົນ ວ່າດ້ວຍ

ການຫລຸດຜ່ອນກຳລັງອາວຸດ ແລະ ກຳລັງທະຫານຢູ່ໃນທະວີບ ເອີຣົບ ຢ່າງຕັ້ງໜ້າ ແລະ ເສີມສ້າງຕະຫລອດມາ.

ສປຢ ໄດ້ສະໜັບສະໜູນຊຸກຍູ້ຕະລອດມາຕໍ່ແນວທາງ ເສີມສ້າງການຜ່ອນຄາຍຄວາມເຄັ່ງຕຶງຂອງສາມປະເທດ ໃນ ອິນດູຈີນ, ອັນແນໃສ່ຫັນປ່ຽນຂົງເຂດອາຊີອາຄະເນ ໃຫ້ເປັນ ເຂດສັນຕິພາບ, ສະຖຽນລະພາບ, ບານໃກ້ເຮືອນຄຽງແລະ ມີການຮ່ວມມືອັນດີ, ໄດ້ສະໜັບສະໜູນຖະແຫລງການ ຂອງ ກອງປະຊຸມ 3 ລັດຖະມົນຕີການຕ່າງປະເທດລາວ -ຫວຽດ ນາມ ແລະ ກຳປູເຈຍ ແຕ່ລະຄັ້ງຢ່າງຫ້າວຫັນ. ກຽວກັບບັນ ຫາ ກຳປູເຈຍ, ສປຢ ກໍ່ໄດ້ອອກຖະແຫລງການສະໜັບ ສະ ໜູນ ທັດສະນະ ແລະ ວິທີການແກ້ໄຂຂອງ 3 ປະເທດອິນ ດູຈີນຕະຫລອດມາ.

ເພື່ອເຮັດໃຫ້ສາຍພົວພັນມິດຕະພາບ, ສາມັກຄີ ຊ່ວຍ ເຫລືອຊຶ່ງກັນ ແລະ ກັນ ໃຫ້ໝັ້ນຍືນມີຄວາມເລິກເຊິ່ງ ຍາວນານ, ສປຢ ໄດ້ມີການລົງນາມໃນສົນທິສັນຍາມິດຕະພາບ ແລະການ ຮ່ວມມືກັບຫລາຍປະເທດໃນໂລກ, ໃນນັ້ນກັບ ສປປລ. ໃນວັນ ທີ 22 / 9 / 1982.

ເຖິງປະຈຸບັນນີ້ອໃນ ແລະ ຈິດໃຈຂອງສົນທິສັນຍາ ດັ່ງ ກ່າວກໍ່ໄດ້ຮັບການພັດທະນາຂະຫຍາຍຕະຫລອດມາເປັນກາວໆ ເຊັ່ນ ວ່າ: ແຕ່ ປີ 1986 ເປັນຕົ້ນມາ, ສປຢ ໄດ້ປະຕິບັດໂຄງ ການສ້າງຕັ້ງໂຮງຊ່າງຫັດຖະກຳ 10 ແຫ່ງ ຢູ່ ສປປລ

ແລະ ຈະສືບຕໍ່ປະຕິບັດໂຄງການນີ້ຈົນເຖິງ ປີ 1990. ຈະຮ່ວມມືດ້ານການຜະລິດ ກາເຟ ແລະ ພິກໄທ ຢູ່ເຂດ ປາກຊ່ອງ, ການປູກແຕງໄມ້, ການປະກອບອຸປະກອນກົນຈັກສຳລັບກໍ່ສ້າງທາງເລກທີ 13 ຢູ່ ສປປລ ພາຍໃຕ້ທຶນກູ້ຢືມ ແລະການແລກປ່ຽນສິນຄ້າ. ຝ່າຍລາວຈະຕ້ອງສົ່ງ ກາເຟ ແທນໃຫ້ ສປຍ 9.000 ໂຕນ ໃນໄລຍະແຕ່ 1988-1990

ປີ 1981 - 1985, ສປຍ ໄດ້ໃຫ້ການ ຊ່ວຍເຫລືອແລະ ກູ້ຢືມ ແກ່ ສປປລ ເປັນມູນຄ່າທັງໝົດ 105 ລ້ານມາກ ( 26 ລ້ານຮູບ ). 1986 - 1990, ສປຍ ຈະໃຫ້ການຊ່ວຍເຫລືອແກ່ ສປປລ ປີ ໜຶ່ງ 18 ລ້ານມາກ.

ເລີ່ມແຕ່ ປີ 1977 ເປັນຕົ້ນມາ, ສປຍ ໄດ້ຮັບເອົານັກສຶກສາລາວ ປີ ລະ 50 ຄົນ ແລະ ນັກຮຽນວິຊາຊີບ ປີລະ 100 ກວ່າຄົນໄປສຶກສາຮ່ຳຮຽນຢູ່ ສປຍ, ແຕ່ລະປີຮັບ ເອົານາຍແພດລາວ ໄປຄົ້ນຄວ້າ, ເຝິກງານ 10 ຄົນແລະເອົາໄປພັກຜ່ອນປິ່ນປົວ 10 ຄົນ, ປະຈຸບັນມີນັກຮຽນ, ນັກສຶກສາ, ນັກຄົ້ນຄວ້າລາວພວມສຶກສາຮ່ຳຮຽນຢູ່ ສປຍ ປະມານ 500 ກວ່າຄົນ.

ສິ່ງດັ່ງກ່າວນັ້ນສະແດງໃຫ້ເຫັນວ່າມິດຕະພາບ, ການຮ່ວມມື, ການຊ່ວຍເຫລືອຂອງ ສປຍ ທີ່ມີຕໍ່ ສປປລ ນັບມື້ນັບຂະຫຍາຍຕົວຕະຫລອດມາ. ພັກ ແລະ ລັດ ສປປລ ຕີລາຄາ



ການພົບປະທີ່ເຕັມໄປດ້ວຍ

ມິດຕະພາບລາວ-ສປຢ

ສູງຕໍ່ການຮ່ວມມື ແລະ ການຊ່ວຍເຫລືອອັນໃຫຍ່ຫລວງ ດັ່ງກ່າວເຊິ່ງແມ່ນຜົນຂອງການພົວພັນອັນດີງາມຂອງສອງປະເທດ ບົນຫລັກການມິດຕະພາບຖານອ້າຍນ້ອງ, ສາມັກຄີຊ່ວຍເຫລືອເຊິ່ງກັນ ແລະ ກັນ ແລະ ບົນພື້ນຖານລັດທິສາກົນ ສັງຄົມນິຍົມ, ຊຶ່ງເປັນການປະກອບສ່ວນເຂົ້າ ໃນການສ້າງຄວາມເປັນປຶກແຜ່ນແໜ້ນໜາຂອງຄ່າຍສັງຄົມນິຍົມ, ການຕໍ່ສູ້ເພື່ອປົກປັກຮັກສາສັນຕິພາບ ແລະ ຄວາມໝັ້ນຄົງສາກົນ.

# ໂຄສະນາ

ວາລະສານຂອງຄະນະໂຄສະນາອົບຮົມ

ສູນກາງພັກ

---

ສະບັບທີ່ 15 ໄຕມາດ IV / 1989

<u>ສາລະບານ</u> ໜ້າ



---

ສຳນັກງານ: ຕັ້ງຢູ່ຫ້ອງການຂອງຄະນະໂຄສະນາອົບຮົມ ສູນ
ກາງພັກ ( ໜອງບອນ - ວຽງຈັນ )
ນ້ຳເບີໂທລະສັບ: 6504-7143

# ຄຳນັບຮັບຕ້ອນ 4 ວັນບຸນໃຫຍ່

1990







໒໒ ມີນາ
ຄົບຮອບ 35 ປີ
ວັນສ້າງຕັ້ງພັກ ປ.ປ.ລ.

໒໒ ເມສາ
ຄົບຮອບ 120 ປີ
ວັນເກີດທ່ານ
ເລນິນ

໒ ທັນວາ
ຄົບຮອບ 15 ປີ
ວັນສະຖາປະນາ ສ.ປ.ປ.ລ.

໑໙ ພຶດສະພາ
ຄົບຮອບ 100 ປີ
ວັນເກີດ ທ່ານໂຮ່ຈີມິນ.